# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໓໘

# ພຣະອະພິທຳ

## ເຫຼັ້ມທີ ໑

# ທຳມະສັງຄະນີ



ສະບັບຄົ້ນຄົ້ວວັດທາດຫຼວງເໜືອ

ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ອຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງ ຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໘ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໘ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໒໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທ ຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົ່ງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາລະບານ

# ພຣະໄຕຣປິດົກ

## ເຫຼັ້ມທີ ໓໔

# ພຣະອະພິທຳ

## ເຫຼັ້ມທີ ໑

# ທຳມະສັງຄະນີ

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສຳມາສຳພຸທທະເຈົ້າ ພຣະອົງນັ້ນ**

# ມາຕິກາ

## ຕິກະມາຕິກາ (໒໒ ຕິກະ)

### ໑. ກຸສະລະຕິກະ

[໑] ກຸສະລາ ທຳມາ. — ສະພາວະທຳທີ່ເປັນກຸສົນ (໓໖໓,໙໗໕,໑໓໗໔)
ອະກຸສະລາ ທຳມາ. — ສະພາວະທຳທີ່ເປັນອະກຸສົນ (໓໖໕,໔໒໗,໙໗໖,໑໓໗໕)
ອັບພະຍາກະຕາ ທຳມາ. — ສະພາວະທຳທີ່ເປັນອັບພະຍາກະຕະ (໔໓໑,໕໗໓,໙໗໗)

### ໒. ເວທະນາຕິກະ

[໒] ສຸຂາຍະ ເວທະນາຍະ ສຳປະຍຸດຕາ ທຳມາ. — ສະພາວະທຳທີ່ສຳປະຍຸດດ້ວຍສຸກເວທະນາ (໙໗໗, ໑໓໗໗)
ທຸກຂາຍະ ເວທະນາຍະ ສຳປະຍຸດຕາ ທຳມາ. — ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາ (໙໗໘, ໑໓໗໗)
ອະທຸກຂະມະສຸຂາຍະເວທະນາຍະ ສຳປະຍຸດຕາທຳມາ. — ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ(໙໘໐, ໑໓໗໘)

## ໓. ວິປາກະຕິກະ

[໓] ວິປາກາ ທຳມາ. — ສະພາວະທຳທີ່ເປັນວິບາກ (໙໑,໑໓໙໐)

ວິປາກະທຳມະທຳມາ. — ສະພາວະທຳທີ່ເປັນເຫດໃຫ້ເກີດວິບາກ (໙໘,໑໓໙໑)

ເນວະວິປາກະນະວິປາກະທຳມະທຳມາ. — ສະພາວະທຳທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ (໙໙໓,໑໓໙໘)

## ໔. ອຸປາທິນນະຕິກະ

[໔] ອຸປາທິນນຸປາທານິຍາ ທຳມາ. — ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖືແລະເປັນອາລົມຂອງອຸປາທານ (໙໙໔,໑໓໙໓)

ອະນຸປາທິນນຸປາທານິຍາ ທຳມາ. — ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ (໙໙໕,໑໓໙໔)

ອະນຸປາທິນນານຸປາທານິຍາ ທຳມາ. — ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາທິດຖິບໍ່ຍຶດຖື ແລະບໍ່ເປັນອາລົມຂອງອຸປາທານ (໙໙໖,໑໓໙໕)

## ໕. ສັງກິລິດຖະຕິກະ

[໕] ສັງກິລິດຖະສັງກິເລສິກາ ທຳມາ. — ສະພາວະທຳທີ່ກິເລດເຮັດໃຫ້ເສົ້າໝອງແລະເປັນອາລົມຂອງກິເລດ (໙໙໗,໑໓໙໖)

ອະສັງກິລິດຖະສັງກິເລສິກາ ທຳມາ. — ສະພາວະທຳທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດ (໙໙໘,໑໓໙໗)

ອະສັງກິລິດຖາສັງກິເລສິກາ ທຳມາ. — ສະພາວະທຳທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແລະບໍ່ເປັນອາລົມ ຂອງກິເລດ (໙໙໙,໑໓໙໘)

## ໖. ວິຕັກກະຕິກະ

[໖] ສະວິຕັກກະສະວິຈາຣາ ທຳມາ. — ສະພາວະທຳທີ່ມີທັງວິຕົກແລະວິຈານ (໑໐໐໐,໑໓໙໙)

ອະວິຕັກກະວິຈາຣະມັດຕາ ທຳມາ. ສະພາວະທຳທີ່ບໍ່ມີວິຕົກມີພຽງວິຈານ (໑໐໐໑,໑໔໐໐)

ອະວິຕັກກາວິຈາຣາ ທຳມາ. ສະພາວະທຳທີ່ບໍ່ມີທັງວິຕົກແລະວິຈານ (໑໐໐໔,໑໔໐໑)

## ໗. ປີຕິຕິກະ

[໗] ປີຕິສະຫະຄະຕາ ທຳມາ. ສະພາວະທຳທີ່ປະກອບດ້ວຍປີຕິ (໑໐໐໓,໑໔໐໔)

ສຸຂະສະຫະຄະຕາ ທຳມາ. ສະພາວະທຳທີ່ປະກອບດ້ວຍສຸກ (໑໐໐໔,໑໔໐໓)

ອຸເປກຂາສະຫະຄະຕາ ທຳມາ. ສະພາວະທຳທີ່ປະກອບດ້ວຍອຸເປກຂາ (໑໐໐໕,໑໔໐໔)

## ໘. ທັດສະນະຕິກະ

[໘] ທັດສະເນນະ ປະຫາຕັບພາ ທຳມາ. ສະພາວະທຳທີ່ຕ້ອງປະຫານດ້ວຍໂສດາປັດຕິມັກ (໑໐໐໖,໑໔໐໕)

ພາວະນາຍະ ປະຫາຕັບພາ ທຳມາ. ສະພາວະທຳທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ (໑໐໑໑,໑໔໐໖)

ເນວະ ທັດສະເນນະ ນະ ພາວະນາຍະ ປະຫາຕັບພາ ທຳມາ. ສະພາວະທຳທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ (໑໐໑໔,໑໔໐໗)

## ໙. ທັດສະນະເຫຕຸຕິກະ

[໙] ທັດສະເນນະ ປະຫາຕັບພະເຫຕຸກາ ທຳມາ. ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ (໑໐໑໓,໑໔໐໘)

ພາວະນາຍະ ປະຫາຕັບພະເຫຕຸກາ ທຳມາ. ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ (໑໐໑໘,໑໔໐໙)

ເນວະ ທັດສະເນນະ ນະ ພາວະນາຍະ ປະຫາຕັບພະເຫຕຸກາ ທຳມາ. ສະພາວະທຳທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ (໑໐໑໙,໑໔໑໐)

## ໑໐. ອາຈະຍະຄາມິຕິກະ

[໑໐] ອາຈະຍະຄາມິໂນ ທຳມາ. ສະພາວະທຳທີ່ເປັນເຫດໃຫ້ເຖິງປະຕິສົນທິ ແລະຈຸຕິ (໑໐໘໐,໑໔໑໑)

ອະປະຈະຍະຄາມິໂນ ທຳມາ. ສະພາວະທຳທີ່ເປັນເຫດໃຫ້ເຖິງນິບພານ (໑໐໘໑,໑໔໑໒)

ເນວາຈະຍະຄາມິໂນ ນາປະຈະຍະຄາມິໂນ ທຳມາ. ສະພາວະທຳທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິຈຸຕິ ແລະນິບພານ (໑໐໘໒,໑໔໑໓)

## ໑໑. ເສກຂະຕິກະ

[໑໑] ເສກຂາ ທຳມາ. ສະພາວະທຳທີ່ເປັນຂອງເສຂະບຸກຄົນ (໑໐໘໓,໑໔໑໔)

ອະເສກຂາ ທຳມາ. ສະພາວະທຳທີ່ເປັນຂອງອະເສຂະບຸກຄົນ (໑໐໘໔,໑໔໑໕)

ເນວະເສກຂາ ນາເສກຂາ ທຳມາ. ສະພາວະທຳທີ່ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນ (໑໐໘໕,໑໔໑໖)

## ໑໒. ປະຣິດຕະຕິກະ

[໑໒] ປະຣິດຕາ ທຳມາ. ສະພາວະທຳທີ່ເປັນປະຣິດຕະ (ກາມາວະຈອນ) (໑໐໘໖,໑໔໑໗)

ມະຫັກຄະຕາ ທຳມາ. ສະພາວະທຳທີ່ເປັນມະຫັກຄະຕະ (ຣູປາວະຈອນແລະອະຣູປາວະຈອນ) (໑໐໘໗,໑໔໑໘)

ອັບປະມານາ ທຳມາ. ສະພາວະທຳທີ່ເປັນອັບປະມານະ (ໂລກຸດຕະຣະ) (໑໐໘໘, ໑໔໑໙)

## ໑໓. ປະຣິດຕາຣຳມະນະຕິກະ

[໑໓] ປະຣິດຕາຣຳມະນາ ທຳມາ. ສະພາວະທຳທີ່ມີປະຣິດຕະ (ກາມາວະຈອນ) ເປັນອາລົມ (໑໐໘໙,໑໔໒໐)

ມະຫັກຄະຕາຣຳມະນາ ທຳມາ. ສະພາວະທຳທີ່ມີມະຫັກຄະຕະ (ຣູປາວະຈອນອະຣູປາວະຈອນ) ເປັນອາລົມ (໑໐໙໐, ໑໔໒໑)

ອັປປະມານາຣຳມະນາ ທຳມາ. — ສະພາວະທຳທີ່ມີອັປປະມານະ (ໂລກຸດຕະຣະ) ເປັນອາລົມ (໑໐໓໑,໑໔໘໔)

## ໑໔. ຫີນະຕິກະ

[໑໔] ຫີນາ ທຳມາ. — ສະພາວະທຳຊັ້ນຕ່ຳ (໑໐໓໒,໑໔໘໓)
ມັດຊິມາ ທຳມາ. — ສະພາວະທຳຊັ້ນກາງ (໑໐໓໓,໑໔໘໔)
ປະນີຕາ ທຳມາ. — ສະພາວະທຳຊັ້ນປະນີດ (໑໐໓໔,໑໔໘໕)

## ໑໕. ມິດສັດຕະຕິກະ

[໑໕] ມິດຊັດຕະນິຍະຕາ ທຳມາ. — ສະພາວະທຳທີ່ມີສະພາວະຜິດແລະໃຫ້ຜົນແນ່ນອນ (໑໐໓໕,໑໔໘໖)
ສຳມັດຕະນິຍະຕາ ທຳມາ. — ສະພາວະທຳທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນ (໑໐໓໖,໑໔໘໗)
ອະນິຍະຕາ ທຳມາ. — ສະພາວະທຳທີ່ບໍ່ແນ່ນອນໂດຍອາການທັງສອງນັ້ນ (໑໐໓໗,໑໔໘໘)

## ໑໖. ມັກຄາຣຳມະນະຕິກະ

[໑໖] ມັກຄາຣຳມະນາ ທຳມາ. — ສະພາວະທຳທີ່ມີມັກເປັນອາລົມ (໑໐໓໘,໑໔໘໙)
ມັກຄະເຫຕຸກາ ທຳມາ. — ສະພາວະທຳທີ່ມີມັກເປັນເຫດ(໑໐໓໙,໑໔໘໙)
ມັກຄາທິປະຕິໂນ ທຳມາ. — ສະພາວະທຳທີ່ມີມັກເປັນອະທິບໍດີ (໑໐໔໐,໑໔໘໙)

## ໑໗. ອຸບປັນນະຕິກະ

[໑໗] ອຸບປັນນາ ທຳມາ. — ສະພາວະທຳທີ່ເກີດຂຶ້ນ (໑໐໔໑,໑໔໙໐)
ອະນຸບປັນນາ ທຳມາ. — ສະພາວະທຳທີ່ຍັງບໍ່ເກີດຂຶ້ນ (໑໐໔໒,໑໔໙໐)
ອຸບປາທິໂນ ທຳມາ. — ສະພາວະທຳທີ່ຈັກເກີດຂຶ້ນແນ່ນອນ (໑໐໔໓,໑໔໙໐)

## ໑໘. ອະຕີຕະຕິກະ

[໑໘] ອະຕີຕາ ທຳມາ. — ສະພາວະທຳທີ່ເປັນອະດີດ (໑໐໔໔,໑໔໓໑)

ອະນາຄະຕາ ທຳມາ. — ສະພາວະທຳທີ່ເປັນອະນາຄົດ (໑໐໔໕, ໑໔໓໑)

ປັດຈຸບັນນາ ທຳມາ. — ສະພາວະທຳທີ່ເປັນປັດຈຸບັນ (໑໐໔໖,໑໔໓໑)

## ໑໙. ອະຕີຕາຣຳມະນະຕິກະ

[໑໙] ອະຕີຕາຣຳມະນາ ທຳມາ. — ສະພາວະທຳທີ່ມີອະດີດທຳເປັນອາລົມ (໑໐໔໗,໑໔໓໒)

ອະນາຄະຕາຣຳມະນາ ທຳມາ. — ສະພາວະທຳທີ່ມີອະນາຄະຕະທຳເປັນອາລົມ (໑໐໔໘,໑໔໓໓)

ປັດຈຸບັນນາຣຳມະນາ ທຳມາ. — ສະພາວະທຳທີ່ມີປັດຈຸບັນທຳເປັນອາລົມ (໑໐໔໙,໑໔໓໔)

## ໒໐. ອັດຊັດຕະຕິກະ

[໒໐] ອັດຊັດຕາ ທຳມາ. — ສະພາວະທຳທີ່ເປັນພາຍໃນຕົນ (໑໐໕໐,໑໔໓໕)

ພະຫິດທາ ທຳມາ. — ສະພາວະທຳທີ່ເປັນພາຍນອກຕົນ (໑໐໕໑,໑໔໓໕)

ອັດຊັດຕະພະຫິດທາ ທຳມາ. — ສະພາວະທຳທີ່ເປັນພາຍໃນຕົນແລະພາຍນອກຕົນ (໑໐໕໒, ໑໔໓໕)

## ໒໑. ອັດຊັດຕາຣຳມະນະຕິກະ

[໒໑] ອັດຊັດຕາຣຳມະນາ ທຳມາ. — ສະພາວະທຳທີ່ມີທຳພາຍໃນຕົນເປັນອາລົມ (໑໐໕໓,໑໔໓໖)

ພະຫິດທາຣຳມະນາ ທຳມາ. — ສະພາວະທຳທີ່ມີທຳພາຍນອກຕົນເປັນອາລົມ (໑໐໕໔,໑໔໓໗)

ອັດຊັດຕະພະຫິດທາຣຳມະນາ ທຳມາ. — ສະພາວະທຳທີ່ມີທຳພາຍໃນຕົນແລະພາຍນອກຕົນເປັນອາລົມ (໑໐໕໕,໑໔໓໗)

## ໒໒. ສະນິທັດສະນະຕິກະ

[໒໒] ສະນິທັດສະນະສັປປະຕິຄາ ທຳມາ. ສະພາວະທຳທີ່ເຫັນໄດ້ແລະກະທົບໄດ້ (໑໐໕໖,໑໔໓໗)

ອະນິທັດສະນະສັປປະຕິຄາ ທຳມາ. ສະພາວະທຳທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ (໑໐໕໗,໑໔໓໘)

ອະນິທັດສະນາປປະຕິຄາ ທຳມາ. ສະພາວະທຳທີ່ເຫັນບໍ່ໄດ້ ແລະກະທົບບໍ່ໄດ້ (໑໐໕໘,໑໔໔໐)

**ຕິກະມາຕິກາ ໒໒ ຕິກະ ຈົບ**

# ທຸກະມາຕິກາ (໑໐໐ ທຸກະ)

## ໑. ເຫຕຸໂຄດສະກະ

### ໑. ເຫຕຸທຸກະ

[໑] ເຫຕຸ ທຳມາ. ສະພາວະທຳທີ່ເປັນເຫດ (໑໐໕໙,໑໐໗໗,໑໔໔໑)

ນະ ເຫຕຸ ທຳມາ. ສະພາວະທຳທີ່ບໍ່ເປັນເຫດ (໑໐໗໘,໑໔໔໒)

### ໒. ສະເຫຕຸກະທຸກະ

[໒] ສະເຫຕຸກາ ທຳມາ. ສະພາວະທຳທີ່ມີເຫດ (໑໐໗໙,໑໔໔໓)

ອະເຫຕຸກາ ທຳມາ. ສະພາວະທຳທີ່ບໍ່ມີເຫດ (໑໐໘໐,໑໔໔໔)

### ໓. ເຫຕຸສຳປະຍຸດຕະທຸກະ

[໓] ເຫຕຸສຳປະຍຸດຕາ ທຳມາ. ສະພາວະທຳທີ່ສຳປະຍຸດດ້ວຍເຫດ (໑໐໘໑,໑໔໔໕)

ເຫຕຸວິປປະຍຸດຕາ ທຳມາ. ສະພາວະທຳທີ່ວິປປະຍຸດຈາກເຫດ (໑໐໘໒,໑໔໔໖)

## ๔. ເຫຕຸສະເຫຕຸກະທຸກະ

[໔] ເຫຕູ ເຈວະ ທຳມາ ສະເຫຕຸກາ ຈະ. ສະພາວະທຳທີ່ເປັນເຫດແລະມີເຫດ (໑໐໗໓,໑໔໔໗)

ສະເຫຕຸກາ ເຈວະ ທຳມາ ນະ ຈະ ເຫຕູ. ສະພາວະທຳທີ່ມີເຫດແຕ່ບໍ່ເປັນເຫດ (໑໐໗໔,໑໔໔໗)

## ໕. ເຫຕຸເຫຕຸສຳປະຍຸດຕະທຸກະ

[໕] ເຫຕູ ເຈວະ ທຳມາ ເຫຕຸສຳປະຍຸດຕາ ຈະ. ສະພາວະທຳທີ່ເປັນເຫດແລະສຳປະຍຸດດ້ວຍເຫດ(໑໐໗໕,໑໔໔໙)

ເຫຕຸສຳປະຍຸດຕາ ເຈວະ ທຳມາ ນະ ຈະ ເຫຕູ. ສະພາວະທຳທີ່ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ (໑໐໗໖,໑໔໕໐)

## ໖. ນະເຫຕຸສະເຫຕຸກະທຸກະ

[໖] ນະ ເຫຕູ ໂຂ ປະນະ ທຳມາ ສະເຫຕຸກາປິ. ສະພາວະທຳທີ່ບໍ່ເປັນເຫດແຕ່ມີເຫດ (໑໐໗໗,໑໔໕໑)

(ນະ ເຫຕູ ໂຂ ປະນະ ທຳມາ) ອະເຫຕຸກາປິ. ສະພາວະທຳທີ່ບໍ່ເປັນເຫດແລະບໍ່ມີເຫດ (໑໐໗໗,໑໔໕໔)

ເຫຕຸໂຄດສະກະ ຈົບ

## ໒. ຈູລັນຕະຣະທຸກະ

## ໑. ສັບປັດຈະຍະທຸກະ

[໗] ສັບປັດຈະຍາ ທຳມາ. ສະພາວະທຳທີ່ມີປັດໄຈປຸງແຕ່ງ (໑໐໗໙,໑໔໕໓)

ອັບປັດຈະຍາ ທຳມາ. ສະພາວະທຳທີ່ບໍ່ມີປັດໄຈປຸງແຕ່ງ (໑໐໘໐,໑໔໕໔)

## ໒. ສັງຂະຕະທຸກະ

[໗] ສັງຂະຕາ ທຳມາ. ສະພາວະທຳທີ່ຖືກປັດໄຈປຸງແຕ່ງ (໑໐໘໑,໑໔໕໕)

ອະສັງ ຂະຕາ ທຳມາ. — ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ (໑໐໙໘,໑໔໕໖)

## ໓. ສະນິທັດສະນະທຸກະ

[໙] ສະນິທັດສະນາ ທຳມາ. — ສະພາວະທຳທີ່ເຫັນໄດ້ (໑໐໙໓,໑໔໕໗)
ອະນິທັດສະນາ ທຳມາ. — ສະພາວະທຳທີ່ເຫັນບໍ່ໄດ້ (໑໐໙໔,໑໔໕໘)

## ໔. ສັບປະຕິຄະທຸກະ

[໑໐] ສັບປະຕິຄາ ທຳມາ. — ສະພາວະທຳທີ່ກະທົບໄດ້ (໑໐໙໕,໑໔໕໙)
ອັ ບປະຕິຄາ ທຳມາ. — ສະພາວະທຳທີ່ກະທົບບໍ່ໄດ້ (໑໐໙໖,໑໔໖໐)

## ໕. ຣູປີທຸກະ

[໑໑] ຣູປີໂນ ທຳມາ. — ສະພາວະທຳທີ່ເປັນຮູບ (໑໐໙໗,໑໔໖໑)
ອະຣູປີໂນ ທຳມາ. — ສະພາວະທຳທີ່ບໍ່ເປັນຮູບ (໑໐໙໘,໑໔໖໒)

## ໖. ໂລກິຍະທຸກະ

[໑໒] ໂລກິຍາ ທຳມາ. — ສະພາວະທຳທີ່ເປັນໂລກິຍະ (໑໐໙໙,໑໔໖໓)
ໂລກຸດຕະຣາ ທຳມາ. — ສະພາວະທຳທີ່ເປັນໂລກຸດຕະຣະ (໑໑໐໐,໑໔໖໔)

## ໗. ເກນະຈິວິນເຍີຍຍະທຸກະ

[໑໓] ເກນະຈິ ວິນເຍີຍຍາ ທຳມາ. — ສະພາວະທຳທີ່ຈິດບາງດວງຮູ້ໄດ້ (໑໑໐໑,໑໔໖໔)
ເກນະຈິ ນະ ວິນເຍີຍຍາ ທຳມາ. — ສະພາວະທຳທີ່ຈິດບາງດວງຮູ້ບໍ່ໄດ້ (໑໑໐໑,໑໔໖໔)

**ຈູລັນຕະຣະທຸກະ ຈົບ**

## ໓. ອາສະວະໂຄດສະກະ

### ໑. ອາສະວະທຸກະ

[໑໔] ອາສະວາ ທຳມາ. ສະພາວະທຳທີ່ເປັນອາສະວະ (໑໑໐໔,໑໔໗໕)

ໂນ ອາສະວາ ທຳມາ. ສະພາວະທຳທີ່ບໍ່ເປັນອາສະວະ (໑໑໐໗,໑໔໗໗)

### ໒. ສາສະວະທຸກະ

[໑໕] ສາສະວາ ທຳມາ. ສະພາວະທຳທີ່ເປັນອາລົມຂອງອາສະວະ (໑໑໐໘,໑໔໗໘)

ອະນາສະວາ ທຳມາ. ສະພາວະທຳທີ່ບໍ່ເປັນອາລົມຂອງອາສະວະ (໑໑໐໙,໑໔໗໙)

### ໓. ອາສະວະສຳປະຍຸດຕະທຸກະ

[໑໖] ອາສະວະສຳປະຍຸດຕາ ທຳມາ. ສະພາວະທຳທີ່ສຳປະຍຸດດ້ວຍອາສະວະ (໑໑໑໐,໑໔໗໙)

ອາສະວະວິປປະຍຸດຕາ ທຳມາ. ສະພາວະທຳທີ່ວິປປະຍຸດຈາກອາສະວະ (໑໑໑໑,໑໔໘໐)

### ໔. ອາສະວະສາສະວະທຸກະ

[໑໗] ອາສະວາ ເຈວະ ທຳມາ ສາສະວາ ຈະ. ສະພາວະທຳທີ່ເປັນອາສະວະແລະເປັນອາລົມຂອງອາສະວະ (໑໑໑໒,໑໔໘໑)

ສາສະວາ ເຈວະ ທຳມາ ໂນ ຈະ ອາສະວາ. ສະພາວະທຳທີ່ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ (໑໑໑໓,໑໔໘໒)

### ໕. ອາສະວະອາສະວະສຳປະຍຸດຕະທຸກະ

[໑໘] ອາສະວາ ເຈວະ ທຳມາ ອາສະວະສຳປະຍຸດຕາ ຈະ. ສະພາວະທຳທີ່ເປັນອາສະວະແລະສຳປະຍຸດດ້ວຍອາສະວະ (໑໑໑໔,໑໔໘໓)

ອາສະວະສຳປະຍຸດຕາ ເຈວະ ທຳມາ ໂນ ຈະ ອາສະວາ. ສະພາວະທຳທີ່ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ(໑໑໑໕,໑໔໗໔)

## ໖. ອາສະວະວິບປະຍຸດຕະສາສະວະທຸກະ

[໑໗] ອາສະວະວິບປະຍຸດຕາ ໂຂ ປະນະ ທຳມາ ສາສະວາປິ. ສະພາວະທຳທີ່ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ (໑໑໑໖,໑໔໗໕)

(ອາສະວະວິບປະຍຸດຕາ ໂຂ ປະນະ ທຳມາ) ອະນາສະວາປິ. (ສະພາວະທຳທີ່ວິບປະຍຸດຈາກອາສະວະ) ແລະບໍ່ເປັນອາລົມຂອງອາສະວະ (໑໑໑໗,໑໔໗໖)

**ອາສະວະໂຄດສະກະ ຈົບ**

## ໔. ສັນໂຍຊະນະໂຄດສະກະ

## ໑. ສັນໂຍຊະນະທຸກະ

[໔໐] ສັນໂຍຊະນາ ທຳມາ. ສະພາວະທຳທີ່ເປັນສັງໂຍດ (໑໑໑໘,໑໔໗໗)

ໂນ ສັນໂຍຊະນາ ທຳມາ. ສະພາວະທຳທີ່ບໍ່ເປັນສັງໂຍດ (໑໑໔໙,໑໔໗໘)

## ໔. ສັນໂຍຊະນິຍະທຸກະ

[໔໑] ສັນໂຍຊະນິຍາ ທຳມາ. ສະພາວະທຳທີ່ເປັນອາລົມຂອງສັງໂຍດ (໑໑໓໐,໑໔໗໙)

ອະສັນໂຍຊະນິຍາ ທຳມາ. ສະພາວະທຳທີ່ບໍ່ເປັນອາລົມຂອງສັງໂຍດ (໑໑໓໑,໑໔໘໐)

## ໓. ສັນໂຍຊະນະສຳປະຍຸດຕະທຸກະ

[໔໔] ສັນໂຍຊະນະສຳປະຍຸດຕາ ທຳມາ. ສະພາວະທຳທີ່ສຳປະຍຸດດ້ວຍສັງໂຍດ (໑໑໓໔,໑໔໘໑)

ສັນໂຍຊະນະວິບປະຍຸດຕາ ທຳມາ. ສະພາວະທຳທີ່ວິບປະຍຸດຈາກສັງໂຍດ (໑໑໓໓,໑໔໘໔)

## ໔. ສັນໂຍຊະນະສັນໂຍຊະນິຍະທຸກະ

[໔໓] ສັນໂຍຊະນາ ເຈວະ ທຳມາ ສັນໂຍຊະນິຍາ ຈະ. ສະພາວະທຳທີ່ເປັນສັງໂຍດແລະເປັນອາລົມຂອງສັງໂຍດ (๑๑໓໔,๑໔໗໓)

ສັນໂຍຊະນິຍາ ເຈວະ ທຳມາ ໂນ ຈະ ສັນໂຍຊະນາ. ສະພາວະທຳທີ່ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດ (๑๑໓໕,๑໔໗໔)

## ໕. ສັນໂຍຊະນະສັນໂຍຊະນະສຳປະຍຸດຕະທຸກະ

[໔໔] ສັນໂຍຊະນາ ເຈວະ ທຳມາ ສັງໂຍຊະນະສຳປະຍຸດຕາ ຈະ. ສະພາວະທຳທີ່ເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດ (๑๑໓໖,๑໔໗໕)

ສັງໂຍຊະນະສຳປະຍຸດຕາ ເຈວະ ທຳມາ ໂນ ຈະ ສັນໂຍຊະນາ. ສະພາວະທຳທີ່ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດ (๑๑໓໗,๑໔໗໖)

## ໖. ສັນໂຍຊະນະວິບປະຍຸດຕະ ສັນໂຍຊະນິຍະທຸກະ

[໔໕] ສັງໂຍຊະນະວິບປະຍຸດຕາ ໂຂ ປະນະ ທຳມາ ສັນໂຍຊະນິຍາປິ. ສະພາວະທຳທີ່ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ (๑๑໓໘, ๑໔໗໗)

(ສັນໂຍນະວິບປະຍຸດຕາ ໂຂ ປະນະ ທຳມາ) ອະສັນໂຍຊະນິຍາປິ. ສະພາວະທຳທີ່ວິບປະຍຸດຈາກສັງໂຍດ ແລະ ບໍ່ເປັນອາລົມຂອງສັງໂຍດ (๑๑໓໙, ๑໔໗໘)

**ສັນໂຍຊະນະໂຄດສະກະ ຈົບ**

# ໕. ຄັນຖະໂຄດສະກະ

## ๑. ຄັນຖະທຸກະ

[໔໖] ຄັນຖາ ທຳມາ. ສະພາວະທຳທີ່ເປັນຄັນຖະ (๑๑໔໐,๑໔໗໙)

ໂນ ຄັນຖາ ທຳມາ. ສະພາວະທຳທີ່ບໍ່ເປັນຄັນຖະ (๑๑໔໕,๑໔໘໐)

## ໔. ຄັນຖະນິຍະທຸກະ

[໔໗] ຄັນຖະນິຍາ ທຳມາ. ສະພາວະທຳທີ່ເປັນອາລົມຂອງຄັນຖະ (໑໑໔໖,໑໔໗໑)

ອະຄັນຖະນິຍາ ທຳມາ. ສະພາວະທຳທີ່ບໍ່ເປັນອາລົມຂອງຄັນຖະ (໑໑໔໗,໑໔ ໗໔)

## ໖. ຄັນຖະສຳປະຍຸດຕະທຸກະ

[໔໘] ຄັນຖະສຳປະຍຸດຕາ ທຳມາ. ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ (໑໑໔໘,໑໔໗໖)

ຄັນຖະວິປປະຍຸດຕາ ທຳມາ. ສະພາວະທຳທີ່ວິປປະຍຸດຈາກຄັນຖະ (໑໑໔໙,໑໔໗໔)

## ໔. ຄັນຖະຄັນຖະນິຍະທຸກະ

[໔໙] ຄັນຖາເຈວະ ທຳມາ ຄັນຖະນິຍາ ຈະ. ສະພາວະທຳທີ່ເປັນຄັນຖະແລະເປັນອາລົມຂອງຄັນຖະ (໑໑໕໐,໑໔໗໕)

ຄັນຖະນິຍາເຈວະທຳມາ ໂນ ຈະ ຄັນຖາ. ສະພາວະທຳທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະ (໑໑໕໑,໑໔໗໖)

## ໕. ຄັນຖະຄັນຖະສຳປະຍຸດຕະທຸກະ

[໖໐] ຄັນຖາ ເຈວະ ທຳມາ ຄັນຖະສຳປະຍຸດຕາ ຈະ. ສະພາວະທຳທີ່ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ (໑໑໕໔, ໑໔໗໗)

ຄັນຖະສຳປະຍຸດຕາ ເຈວະ ທຳມາ ໂນ ຈະ ຄັນຖາ. ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະ (໑໑໕໖,໑໔໗໘)

## ໖. ຄັນຖະວິປປະຍຸດຕະຄັນຖະນິຍະທຸກະ

[໖໑] ຄັນຖະວິປປະຍຸດຕາ ໂຂ ປະນະ ທຳມາ ຄັນຖະນິຍາປິ. ສະພາວະທຳທີ່ວິປປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະ (໑໑໕໔,໑໔໗໙)

(ຄັນຖະວິບປະຍຸດຕາ ໂຂ ປະນະ ທຳມາ) ອະຄັນຖະນິຍາປີ. ສະພາວະທຳທີ່ວິບປະຍຸດຈາກຄັນຖະ ແລະບໍ່ເປັນອາລົມຂອງຄັນຖະ (໑໑໕໕,໑໕໐໐)

**ຄັນຖະໂຄດສະກະ ຈົບ**

## ໗. ໂອຄະໂຄດສະກະ

### ໑. ໂອຄະທຸກະ

[໓໘] ໂອຄາ ທຳມາ. — ສະພາວະທຳທີ່ເປັນໂອຄະ (໑໑໕໗,໑໕໐໑)

ໂນ ໂອຄາ ທຳມາ. — ສະພາວະທຳທີ່ບໍ່ເປັນໂອຄະ

### ໒. ໂອຄະນິຍະທຸກະ

[໓໓] ໂອຄະນິຍາ ທຳມາ. — ສະພາວະທຳທີ່ເປັນອາລົມຂອງໂອຄະ

ອະໂນຄະນິຍາ ທຳມາ. — ສະພາວະທຳທີ່ບໍ່ເປັນອາລົມຂອງໂອຄະ

### ໓. ໂອຄະສຳປະຍຸດຕະທຸກະ

[໓໔] ໂອຄະສຳປະຍຸດຕາ ທຳມາ. — ສະພາວະທຳທີ່ສຳປະຍຸດດ້ວຍໂອຄະ

ໂອຄະວິບປະຍຸດຕາ ທຳມາ. — ສະພາວະທຳທີ່ວິບປະຍຸດຈາກໂອຄະ

### ໔. ໂອຄະໂອຄະນິຍະທຸກະ

[໓໕] ໂອຄາ ເຈວະ ທຳມາ ໂອຄະນິຍາ ຈະ. — ສະພາວະທຳທີ່ເປັນໂອຄະແລະເປັນອາລົມຂອງໂອຄະ

ໂອຄະນິຍາ ເຈວະ ທຳມາ ໂນ ຈະ ໂອຄາ. — ສະພາວະທຳທີ່ເປັນອາລົມຂອງໂອຄະແຕ່ບໍ່ເປັນໂອຄະ

### ໕. ໂອຄະໂອຄະສຳປະຍຸດຕະທຸກະ

[໓໗] ໂອຄາ ເຈວະ ທຳມາ ໂອຄະສຳປະຍຸດຕາ ຈະ. — ສະພາວະທຳທີ່ເປັນໂອຄະແລະສຳປະຍຸດດ້ວຍໂອຄະ

ໂອຄະສຳປະຍຸດຕາ ເຈວະ ທຳມາ ໂນ ຈະ ໂອຄາ. ສະພາວະທຳທີ່ສຳປະຍຸດດ້ວຍໂອຄະແຕ່ບໍ່ເປັນໂອຄະ

## ໖. ໂອຄະວິບປະຍຸດຕະໂອຄະນີຍະທຸກະ

[໓໗] ໂອຄະວິບປະຍຸດຕາ ໂຂ ປະນະ ທຳມາ ໂອຄະນີຍາປີ. ສະພາວະທຳທີ່ວິບປະຍຸດຈາກໂອຄະແຕ່ເປັນອາລົມຂອງໂອຄະ

(ໂອຄະວິບປະຍຸດຕາ ໂຂ ປະນະ ທຳມາ) ອະໂນຄະນີຍາປີ. ສະພາວະທຳທີ່ວິບປະຍຸດຈາກໂອຄະແລະບໍ່ເປັນອາລົມຂອງໂອຄະ

**ໂອຄະໂຄດສະກະ ຈົບ**

## ໗. ໂຍຄະໂຄດສະກະ

## ໑. ໂຍຄະທຸກະ

[໓໘] ໂຍຄາ ທຳມາ. ສະພາວະທຳທີ່ເປັນໂຍຄະ (໑໑໕໗,໑໕໐໘)

ໂນ ໂຍຄາ ທຳມາ. ສະພາວະທຳທີ່ບໍ່ເປັນໂຍຄະ

## ໒. ໂຍຄະນີຍະທຸກະ

[໓໙] ໂຍຄະນີຍາ ທຳມາ. ສະພາວະທຳທີ່ເປັນອາລົມຂອງໂຍຄະ

ອະໂຍຄະນີຍາ ທຳມາ. ສະພາວະທຳທີ່ບໍ່ເປັນອາລົມຂອງໂຍຄະ

## ໓. ໂຍຄະສຳປະຍຸດຕະທຸກະ

[໔໐] ໂຍຄະສຳປະຍຸດຕາ ທຳມາ. ສະພາວະທຳທີ່ສຳປະຍຸດດ້ວຍໂຍຄະ

ໂຍຄະວິບປະຍຸດຕາ ທຳມາ. ສະພາວະທຳທີ່ວິບປະຍຸດຈາກໂຍຄະ

## ໔. ໂຍຄະໂຍຄະນີຍະທຸກະ

[໔໑] ໂຍຄາເຈວະ ທຳມາ ໂຍຄະນີຍາ ຈະ. ສະພາວະທຳທີ່ເປັນໂຍຄະແລະເປັນອາລົມຂອງໂຍຄະ

ໂຍຄະນີຍາເຈວະ ທຳມາ ໂນ ຈະ ໂຍຄາ. ສະພາວະທຳທີ່ເປັນອາລົມຂອງໂຍຄະແຕ່ບໍ່ເປັນໂຍຄະ

## ໕. ໂຍຄະໂຍຄະສຳປະຍຸດຕະທຸກະ

[໔໘] ໂຍຄາເຈວະ ທຳມາ ໂຍຄະສຳປະຍຸດຕາ ຈະ. ສະພາວະທຳທີ່ເປັນໂຍຄະແລະສຳປະຍຸດດ້ວຍໂຍຄະ

ໂຍຄະສຳປະຍຸດຕາເຈວະ ທຳມາ ໂນ ຈະ ໂຍຄາ. ສະພາວະທຳທີ່ສຳປະຍຸດດ້ວຍໂຍຄະແຕ່ບໍ່ເປັນໂຍຄະ

## ໖. ໂຍຄະວິບປະຍຸດຕະໂຍຄະນິຍະທຸກະ

[໔໙] ໂຍຄະວິບປະຍຸດຕາ ໂຂ ປະນະ ທຳມາ ໂຍຄະນິຍາປິ. ສະພາວະທຳທີ່ວິບປະຍຸດຈາກໂຍຄະແຕ່ເປັນອາລົມຂອງໂຍຄະ

(ໂຍຄະວິບປະຍຸດຕາ ໂຂ ປະນະ ທຳມາ) ອະໂຍຄະນິຍາປິ. ສະພາວະທຳທີ່ວິບປະຍຸດຈາກໂຍຄະແລະບໍ່ເປັນອາລົມຂອງໂຍຄະ

**ໂຍຄະໂຄດສະກະ ຈົບ**

## ໗. ນີວະຣະນະໂຄດສະກະ

## ໑. ນີວະຣະນະທຸກະ

[໕໐] ນີວະຣະນາ ທຳມາ. ສະພາວະທຳທີ່ເປັນນີວອນ (໑໑໕໗,໑໕໐໖)

ໂນ ນີວະຣະນາ ທຳມາ. ສະພາວະທຳທີ່ບໍ່ເປັນນີວອນ (໑໑໕໘,໑໕໐໔)

## ໒. ນີວະຣະນິຍະທຸກະ

[໕໑] ນີວະຣະນິຍາ ທຳມາ. ສະພາວະທຳທີ່ເປັນອາລົມຂອງນີວອນ (໑໑໖໐,໑໕໐໕)

ອະນີວະຣະນິຍາ ທຳມາ. ສະພາວະທຳທີ່ບໍ່ເປັນອາລົມຂອງນີວອນ (໑໑໖໑,໑໕ ໐໖)

## ໓. ນີວະຣະນະສຳປະຍຸດຕະທຸກະ

[໕໒] ນີວະຣະນະສຳປະຍຸດຕາ ທຳມາ. ສະພາວະທຳທີ່ສຳປະຍຸດດ້ວຍນີວອນ (໑໑໖໒,໑໕໐໗)

ນິວະຣະນະວິບປະຍຸດຕາ ທຳມາ. ສະພາວະທຳທີ່ວິບປະຍຸດຈາກນິວອນ (໑໑໗໓,໑໕໐໘)

## ໔. ນິວະຣະນະນິວະຣະນິຍະທຸກະ

[໔໗] ນິວະຣະນາ ເຈວະ ທຳມາ ນິວະຣະນິຍາ ຈະ. ສະພາວະທຳທີ່ເປັນນິວອນແລະເປັນອາລົມຂອງນິວອນ (໑໑໗໔,໑໕໐໙)

ນິວະຣະນິຍາ ເຈວະ ທຳມາ ໂນ ຈ ນິວະຣະນາ. ສະພາວະທຳທີ່ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນ (໑໑໗໕,໑໕໑໐)

## ໕. ນິວະຣະນະນິວະຣະນະສຳປະຍຸດຕະທຸກະ

[໔໘] ນິວະຣະນາ ເຈວະ ທຳມາ ນິວະຣະນະສຳປະຍຸດຕາ ຈະ. ສະພາວະທຳທີ່ເປັນນິວອນແລະສຳປະຍຸດດ້ວຍນິວອນ (໑໑໗໖,໑໕໑໑)

ນິວະຣະນະສຳປະຍຸດຕາ ເຈວະ ທຳມາ ໂນ ຈະ ນິວະຣະນາ. ສະພາວະທຳທີ່ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນ (໑໑໗໗,໑໕໑໒)

## ໖. ນິວະຣະນະວິບປະຍຸດຕະນິວະຣະນິຍະທຸກະ

[໔໙] ນິວະຣະນະວິບປະຍຸດຕາ ໂຂ ປະນະ ທຳມາ ນິວະຣະນິຍາປິ. ສະພາວະທຳທີ່ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນ (໑໑໗໘,໑໕໑໓)

(ນິວະຣະນະວິບປະຍຸດຕາ ໂຂ ປະນະ ທຳມາ) ອະນິວະຣະນິຍາປິ. ສະພາວະທຳທີ່ວິບປະຍຸດຈາກນິວອນແລະບໍ່ເປັນອາລົມຂອງນິວອນ (໑໑໗໙,໑໕໑໔)

**ນິວະຣະນະໂຄດສະກະ ຈົບ**

## ໗. ປະຣາມາສະໂຄດສະກະ

### ໑. ປະຣາມາສະທຸກະ

[໕໐] ປະຣາມາສາ ທຳມາ. ສະພາວະທຳທີ່ເປັນປະຣາມາດ (໑໑໗໐,໑໕໑໕)

ໂນ ປະຣາມາສາ ທຳມາ. ສະພາວະທຳທີ່ບໍ່ເປັນປະຣາມາດ (໑໑໗໘,໑໕໑໖)

### ໘. ປະຣາມັດຖະທຸກະ

[໕໑] ປະຣາມາສາ ທຳມາ. ສະພາວະທຳທີ່ເປັນອາລົມຂອງປະຣາມາດ (໑໑໗໓,໑໕໑໗)

ອະປະຣາມາສາ ທຳມາ. ສະພາວະທຳທີ່ບໍ່ເປັນອາລົມຂອງປະຣາມາດ (໑໑໗໔, ໑໕໑໗)

### ໓. ປະຣາມາສະສຳປະຍຸດຕະທຸກະ

[໕໘] ປະຣາມາສະສຳປະຍຸດຕາ ທຳມາ. ສະພາວະທຳທີ່ສຳປະຍຸດດ້ວຍປະຣາມາດ (໑໑໗໕,໑໕໑໗)

ປະຣາມາສະວິບປະຍຸດຕາ ທຳມາ. ສະພາວະທຳທີ່ວິບປະຍຸດຈາກປະຣາມາດ (໑໑໗໖,໑໕໘໐)

### ໔. ປະຣາມາສະປະຣາມັດຖະທຸກະ

[໕໓] ປະຣາມາສາ ເຈວະ ທຳມາ ປະຣາມາສາ ຈະ. ສະພາວະທຳທີ່ເປັນປະຣາມາດ ແລະເປັນອາລົມຂອງປະຣາມາດ (໑໑໗໗,໑໕໘໑)

ປະຣາມາສາ ເຈວະ ທຳມາ ໂນ ຈະ ປະຣາມາສາ. ສະພາວະທຳທີ່ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດ (໑໑໗໗,໑໕໘໘)

## ៥. ປະຣາມາສະວິບປະຍຸດຕະປະຣາມັດຖະທຸກະ

[໕໔] ປະຣາມາສະວິບປະຍຸດຕາ ໂຂ ປະນະ ທຳມາ ປະຣາມະນາປິ. — ສະພາວະທຳທີ່ວິບປະຍຸດຈາກປະຣາມາດແຕ່ເປັນອາລົມຂອງປະຣາມາດ (໑໑໗໘,໑໕໔໓)

(ປະຣາມາສະວິບປະຍຸດຕາ ໂຂ ປະນະ ທຳມາ) ອະປະຣາມະນາປິ. — ສະພາວະທຳທີ່ວິບປະຍຸດຈາກປະຣາມາດແລະບໍ່ເປັນອາລົມຂອງປະຣາມາດ (໑໑໗໐,໑໕໔໔)

### ປະຣາມາສະໂຄດສະກະ ຈົບ

## ໑໐. ມະຫັນຕະຣະທຸກະ

### ໑. ສາຣຳມະນະທຸກະ

[໕໕] ສາຣຳມະນາ ທຳມາ. — ສະພາວະທຳທີ່ຮັບຮູ້ອາລົມໄດ້ (໑໑໗໑,໑໕໔໕)

ອະນາຣຳມະນາ ທຳມາ. — ສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ (໑໑໗໔,໑໕໔໖)

### ໔. ຈິດຕະທຸກະ

[໕໖] ຈິດຕາ ທຳມາ. — ສະພາວະທຳທີ່ເປັນຈິດ (໑໑໗໓,໑໕໔໗)

ໂນ ຈິດຕາ ທຳມາ. — ສະພາວະທຳທີ່ບໍ່ເປັນຈິດ (໑໑໗໔,໑໕໔໘)

### ໓. ເຈຕະສິກະທຸກະ

[໕໗] ເຈຕະສິກາ ທຳມາ. — ສະພາວະທຳທີ່ເປັນເຈຕະສິກາ (໑໑໗໕,໑໕໔໙)

ອະເຈຕະສິກາ ທຳມາ. — ສະພາວະທຳທີ່ບໍ່ເປັນເຈຕະສິກາ (໑໑໗໖,໑໕໓໐)

### ໔. ຈິດຕະສຳປະຍຸດຕະທຸກະ

[໕໘] ຈິດຕະສຳປະຍຸດຕາ ທຳມາ. — ສະພາວະທຳທີ່ສຳປະຍຸດດ້ວຍຈິດ (໑໑໗໗,໑໕໓໑)

ຈິດຕະວິບປະຍຸດຕາ ທຳມາ. ສະພາວະທຳທີ່ວິບປະຍຸດຈາກຈິດ (໑໑໙໗,໑໕໓໔)

## ໕. ຈິດຕະສັງສັດຖະທຸກະ

[໕໙] ຈິດຕະສັງສະຕະຖາ ທຳມາ. ສະພາວະທຳທີ່ປະປົນກັບຈິດ (໑໑໙໙,໑໕໓໓)

ຈິດຕະວິສັງສະຕະຖາ ທຳມາ. ສະພາວະທຳທີ່ບໍ່ປະປົນກັບຈິດ (໑໔໐໐,໑໕໓໔)

## ໖. ຈິດຕະສະມຸດຖານະທຸກະ

[໖໐] ຈິດຕະສະມຸດຖານາ ທຳມາ. ສະພາວະທຳທີ່ມີຈິດເປັນສະມຸດຖານ (໑໔໐໑,໑໕໓໕)

ໂນ ຈິດຕະສະມຸດຖານາ ທຳມາ. ສະພາວະທຳທີ່ບໍ່ມີຈິດເປັນສະມຸດຖານ (໑໔໐໔,໑໕໓໖)

## ໗. ຈິດຕະສະຫະພູທຸກະ

[໖໑] ຈິດຕະສະຫະພຸໂນ ທຳມາ. ສະພາວະທຳທີ່ເກີດພ້ອມກັບຈິດ (໑໔໐໓,໑໕໓໗)

ໂນ ຈິດຕະສະຫະພຸໂນ ທຳມາ. ສະພາວະທຳທີ່ບໍ່ເກີດພ້ອມກັບຈິດ (໑໔໐໔,໑໕໓໘)

## ໘. ຈິດຕານຸປະຣິວັດຕິທຸກະ

[໖໔] ຈິດຕານຸປະຣິວັດຕິໂນ ທຳມາ. ສະພາວະທຳທີ່ເປັນໄປຕາມຈິດ (໑໔໐໕,໑໕໓໙)

ໂນ ຈິດຕານຸປະຣິວັດຕິໂນ ທຳມາ. ສະພາວະທຳທີ່ບໍ່ເປັນໄປຕາມຈິດ (໑໔໐໖,໑໕໔໐)

## ໙. ຈິດຕະສັງສັດຖະສະມຸດຖານະທຸກະ

[໓໖] ຈິດຕະສັງສັດຖະສະມຸດຖານາ ທຳມາ. ສະພາວະທຳທີ່ປະປົນກັບຈິດແລະມີຈິດເປັນສະມຸດຖານ (໑໘໐໗,໑໕໘໑)

ໂນ ຈິດຕະສັງສັດຖະສະມຸດຖານາ ທຳມາ. ສະພາວະທຳທີ່ບໍ່ປະປົນກັບຈິດແລະມີຈິດເປັນສະມຸດຖານ (໑໘໐໘,໑໕໘໘)

## ໑໐. ຈິດຕະສັງສັດຖະສະມຸດຖານະສະຫະພູທຸກະ

[໓໘] ຈິດຕະສັງສັດຖະສະມຸດຖານະສະຫະພຸໂນ ທຳມາ. ສະພາວະທຳທີ່ປະປົນກັບຈິດມີຈິດເປັນສະມຸດຖານ ແລະເກີດພ້ອມກັບຈິດ (໑໘໐໙,໑໕໘໓)

ໂນ ຈິດຕະສັງສັດຖະສະມຸດຖານະສະຫະພຸໂນ ທຳມາ. ສະພາວະທຳທີ່ບໍ່ປະປົນກັບຈິດມີຈິດເປັນສະມຸດຖານ ແລະເກີດພ້ອມກັບຈິດ (໑໘໑໐,໑໕໘໔)

## ໑໑. ຈິດຕະສັງສັດຖະສະມຸດຖານານຸບະຣິວັດຕິທຸກະ

[໓໕] ຈິດຕະສັງສັດຖະສະມຸດຖານານຸປະຣິວັດຕິໂນ ທຳມາ. ສະພາວະທຳທີ່ປະປົນກັບຈິດມີຈິດເປັນສະມຸດຖານແລະເປັນໄປຕາມຈິດ (໑໘໑໑,໑໕໘໕)

ໂນ ຈິດຕະສັງສັດຖະສະມຸດຖານານຸປະຣິວັດຕິໂນ ທຳມາ. ສະພາວະທຳທີ່ບໍ່ປະປົນກັບຈິດມີຈິດເປັນສະມຸດຖານ ແລະເປັນໄປຕາມຈິດ (໑໘໑໒,໑໕໘໖)

## ໑໒. ອັດຊັດຕິກະທຸກະ

[໓໖] ອັດຊັດຕິກາ ທຳມາ. ສະພາວະທຳທີ່ເປັນພາຍໃນ (໑໘໑໓,໑໕໘໗)

ພາຫິຣາ ທຳມາ. ສະພາວະທຳທີ່ເປັນພາຍນອກ (໑໘໑໔,໑໕໘໘)

## ໑໓. ອຸປາທາທຸກະ

[໖໗] ອຸປາທາ ທຳມາ. ສະພາວະທຳທີ່ເປັນອຸປາທາຍະຮູບ (໑໔໑໕,໑໕໔໙)

ໂນ ອຸປາທາ ທຳມາ. ສະພາວະທຳທີ່ບໍ່ເປັນອຸປາທາຍະຮູບ (໑໔໑໖,໑໕໕໐)

## ໑໔. ອຸປາທິນນະທຸກະ

[໖໘] ອຸປາທິນນາ ທຳມາ. ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖື (໑໔໑໗,໑໕໕໑)

ອະນຸປາທິນນາ ທຳມາ. ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖື (໑໔໑໘,໑໕໕໒)

**ມະຫັນຕະຣະທຸກະ ຈົບ**

# ໑໑. ອຸປາທານະໂຄດສະກະ

## ໑. ອຸປາທານທຸກະ

[໖໙] ອຸປາທານາ ທຳມາ. ສະພາວະທຳທີ່ເປັນອຸປາທານ (໑໔໑໙,໑໕໕໓)

ໂນ ອຸປາທານາ ທຳມາ. ສະພາວະທຳທີ່ບໍ່ເປັນອຸປາທານ (໑໔໔໔,໑໕໕໔)

## ໔. ອຸປາທານິຍະທຸກະ

[໗໐] ອຸປາທານິຍາ ທຳມາ. ສະພາວະທຳທີ່ເປັນອາລົມຂອງອຸປາທານ (໑໔໔໕,໑໕໕໕)

ອະນຸປາທານິຍາ ທຳມາ. ສະພາວະທຳທີ່ບໍ່ເປັນອາລົມຂອງອຸປາທານ (໑໔໔໖,໑໕໕໖)

## ໓. ອຸປາທານສຳປະຍຸດຕະທຸກະ

[໗໑] ອຸປາທານສຳປະຍຸດຕາ ທຳມາ. ສະພາວະທຳທີ່ສຳປະຍຸດດ້ວຍອຸປາທານ (໑໔໔໗,໑໕໕໗)

ອຸປາທານວິບປະຍຸດຕາ ທຳມາ. ສະພາວະທຳທີ່ວິບປະຍຸດຈາກອຸປາທານ (໑໔໔໘,໑໕໕໘)

## ໔. ອຸປາທານະອຸປາທານິຍະທຸກະ

[໗໔] ອຸປາທານາ ເຈວະ ທຳມາ ອຸປາທານິຍາ ຈະ. ສະພາວະທຳທີ່ເປັນອຸປາທານ ແລະເປັນອາລົມຂອງອຸປາທານ (໑໔໔໙,໑໕໕໙)

ອຸປາທານິຍາ ເຈວະ ທຳມາ ໂນ ຈະ ອຸປາທານາ. ສະພາວະທຳທີ່ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານ (໑໔໓໐,໑໕໖໐)

## ໕. ອຸປາທານະສຳປະຍຸດຕະທຸກະ

[໗໓] ອຸປາທານາ ເຈວະ ທຳມາ ອຸປາທານະສຳປະຍຸດຕາ ຈະ. ສະພາວະທຳທີ່ເປັນອຸປາທານແລະສຳປະຍຸດດ້ວຍອຸປາທານ (໑໔໓໑,໑໕໖໑)

ອຸປາທານສຳປະຍຸດຕາ ເຈວະ ທຳມາ ໂນ ຈະ ອຸປາທານາ. ສະພາວະທຳທີ່ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານ (໑໔໓໔,໑໕໖໔)

## ໖. ອຸປາທານວິບປະຍຸດຕະອຸປາທານິຍະທຸກະ

[໗໔] ອຸປາທານະວິບປະຍຸດຕາ ໂຂ ປະນະ ທຳມາ ອຸປາທານິຍາປິ. ສະພາວະທຳທີ່ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານ (໑໔໓໓, ໑໕໖໓)

(ອຸປາທານະວິບປະຍຸດຕາ ໂຂ ປະນະ ທຳມາ) ອະນຸປາທານິຍາປິ. ສະພາວະທຳທີ່ວິບປະຍຸດຈາກອຸປາທານ ແລະບໍ່ເປັນອາລົມຂອງອຸປາທານ (໑໔໓໔, ໑໕໖໔)

**ອຸປາທານະໂຄດສະກະ ຈົບ**

## ໑໔. ກິເລສະໂຄດສະກະ

### ໑. ກິເລສະທຸກະ

[ກ໕] ກິເລສາ ທຳມາ. ສະພາວະທຳທີ່ເປັນກິເລດ (໑໔໓໕,໑໕໗໕)

ໂນ ກິເລສາ ທຳມາ. ສະພາວະທຳທີ່ບໍ່ເປັນກິເລດ (໑໔໔໖,໑໕໗໖)

### ໒. ສັງກິເລສິກະທຸກະ

[ກ໖] ສັງກິເລສິກາ ທຳມາ. ສະພາວະທຳທີ່ເປັນອາລົມຂອງກິເລດ (໑໔໔໗,໑໕໗໗)

ອະສັງກິເລສິກາ ທຳມາ. ສະພາວະທຳທີ່ບໍ່ເປັນອາລົມຂອງກິເລດ (໑໔໔໘,໑໕໗໘)

### ໓. ສັງກິລິດຖະທຸກະ

[ກ໗] ສັງກິລິດຖາ ທຳມາ. ສະພາວະທຳທີ່ກິເລດເຮັດໃຫ້ເສົ້າໝອງ (໑໔໔໙,໑໕໗໙)

ອະສັງກິລິດຖາ ທຳມາ. ສະພາວະທຳທີ່ກິເລດບໍ່ເຮັດໃຫ້ເສົ້າໝອງ (໑໔໕໐,໑໕໘໐)

### ໔. ກິເລສະສຳປະຍຸດຕະທຸກະ

[ກ໘] ກິເລສະສຳປະຍຸດຕາ ທຳມາ. ສະພາວະທຳທີ່ສຳປະຍຸດດ້ວຍກິເລດ (໑໔໕໑,໑໕໘໑)

ກິເລສະວິບປະຍຸດຕາ ທຳມາ. ສະພາວະທຳທີ່ວິບປະຍຸດຈາກກິເລດ (໑໔໕໒,໑໕໘໒)

### ໕. ກິເລສະສັງກິເລສິກະທຸກະ

[ກ໙] ກິເລສາ ເຈວະ ທຳມາ ສັງກິເລສິກາ ຈະ. ສະພາວະທຳທີ່ເປັນກິເລດແລະເປັນອາລົມຂອງກິເລດ (໑໔໕໓,໑໕໘໓)

ສັງກິເລສິກາ ເຈວະ ທຳມາ ໂນ ຈະ ກິເລສາ. ສະພາວະທຳທີ່ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດ (໑໔໕໔,໑໕໘໔)

## ໖. ກິເລສະສັງກິລິດຖະທຸກະ

[໗໐] ກິເລສາ ເຈວະ ທຳມາ ສັງກິລິດຖາ ຈະ. ສະພາວະທຳທີ່ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ (໑໘໕໕,໑໕໗໕)

ສັງກິລິດຖາ ເຈວະ ທຳມາ ໂນ ຈ ກິເລສາ. ສະພາວະທຳທີ່ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດ (໑໘໕໖,໑໕໗໖)

## ໗. ກິເລສະສຳປະຍຸດຕະທຸກະ

[໗໑] ກິເລສາ ເຈວະ ທຳມາ ກິເລສະສຳປະຍຸດຕາ ຈະ. ສະພາວະທຳທີ່ເປັນກິເລດ ແລະສຳປະຍຸດດ້ວຍກິເລດ (໑໘໕໗,໑໕໗໗)

ກິເລສະສຳປະຍຸດຕາ ເຈວະ ທຳມາ ໂນ ຈະ ກິເລສາ. ສະພາວະທຳທີ່ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດ (໑໘໕໘,໑໕໗໘)

## ໘. ກິເລສະວິບປະຍຸດຕະສັງກິເລສິກະທຸກະ

[໗໘] ກິເລສະວິບປະຍຸດຕາ ໂຂ ປະນະ ທຳມາ ສັງກິເລສິກາປິ. ສະພາວະທຳທີ່ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດ (໑໘໕໙,໑໕໗໙)

(ກິເລສະວິບປະຍຸດຕາ ໂຂ ປະນະ ທຳມາ) ອະສັງກິເລສິກາປິ. ສະພາວະທຳທີ່ວິບປະຍຸດຈາກກິເລດ ແລະບໍ່ເປັນອາລົມຂອງກິເລດ (໑໘໖໐,໑໕໘໐)

**ກິເລສະໂຄດສະກະ ຈົບ**

## ໑໓. ປິດຖິທຸກະ

## ໑. ທັດສະເນນະປະຫາຕັບພະທຸກະ

[໗໓] ທັດສະເນນະ ປະຫາຕັບພາ ທຳມາ. ສະພາວະທຳທີ່ຕ້ອງປະຫານດ້ວຍໂສດາປັດຕິມັກ (໑໘໖໑,໑໕໘໑)

ນະ ທັດສະເນນະ ປະຫາຕັບພາ ທຳມາ. ສະພາວະທຳທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ (໑໘໖໕,໑໕໘໘)

## ໘. ພາວະນາຍະປະຫາຕັບພະທຸກະ

[໗໔] ພາວະນາຍະ ປະຫາຕັບພາ ທຳມາ. ສະພາວະທຳທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ (໑໘໖໓,໑໕໗໓)

ນະ ພາວະນາຍະ ປະຫາຕັບພາ ທຳມາ. ສະພາວະທຳທີ່ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ (໑໘໖໗,໑໕໗໔)

## ໙. ທັດສະເນນະປະຫາຕັບພະເຫຕຸກະທຸກະ

[໗໕] ທັດສະເນນະ ປະຫາຕັບພະເຫຕຸກາ ທຳມາ. ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ (໑໘໖໙,໑໕໗໕)

ນະ ທັດສະເນນະ ປະຫາຕັບພະເຫຕຸກາ ທຳມາ. ສະພາວະທຳທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ (໑໘໗໘,໑໕໗໖)

## ໑໐. ພາວະນາຍະປະຫາຕັບພະເຫຕຸກະທຸກະ

[໗໖] ພາວະນາຍະ ປະຫາຕັບພະເຫຕຸກາ ທຳມາ. ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ (໑໘໗໓,໑໕໗໗)

ນະ ພາວະນາຍະ ປະຫາຕັບພະເຫຕຸກາ ທຳມາ. ສະພາວະທຳທີ່ບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ (໑໘໗໔,໑໕໗໙)

## ໑໑. ສະວິຕັກກະທຸກະ

[໗໗] ສະວິຕັກກາ ທຳມາ. ສະພາວະທຳທີ່ມີວິຕົກ (໑໘໗໕,໑໕໗໙)

ອະວິຕັກກາ ທຳມາ. ສະພາວະທຳທີ່ບໍ່ມີວິຕົກ (໑໘໗໖,໑໕໘໐)

## ໑໒. ສະວິຈາຣະທຸກະ

[໗໘] ສະວິຈາຣາ ທຳມາ. ສະພາວະທຳທີ່ມີວິຈານ (໑໘໗໗,໑໕໘໑)

ອະວິຈາຣາ ທຳມາ. ສະພາວະທຳທີ່ບໍ່ມີວິຈານ (໑໘໗໘,໑໕໘໒)

## ໗. ສັປປີຕິກະທຸກະ

[໕໙] ສັປປີຕິກາ ທຳມາ. ສະພາວະທຳທີ່ມີປີຕິ (໑໔໗໙,໑໕໙໖)
ອັປປີຕິກາ ທຳມາ. ສະພາວະທຳທີ່ບໍ່ມີປີຕິ (໑໔໘໐,໑໕໙໔)

## ໘. ປີຕິສະຫະຄະຕະທຸກະ

[໙໐] ປີຕິສະຫະຄະຕາ ທຳມາ. ສະພາວະທຳທີ່ປະກອບດ້ວຍປີຕິ (໑໔໘໑,໑໕ ໙໕)
ນະ ປີຕິສະຫະຄະຕາ ທຳມາ. ສະພາວະທຳທີ່ບໍ່ປະກອບດ້ວຍປີຕິ (໑໔໘໔,໑໕໙໖)

## ໙. ສຸຂະສະຫະຄະຕະທຸກະ

[໙໑] ສຸຂະສະຫະຄະຕາ ທຳມາ. ສະພາວະທຳທີ່ປະກອບດ້ວຍສຸກ (໑໔໘໖,໑໕໙໗)
ນະ ສຸຂະສະຫະຄະຕາ ທຳມາ. ສະພາວະທຳທີ່ບໍ່ປະກອບດ້ວຍສຸກ (໑໔໘໔,໑໕໙໘)

## ໑໐. ອຸເປກຂາສະຫະຄະຕະທຸກະ

[໙໔] ອຸເປກຂາສະຫະຄະຕາ ທຳມາ. ສະພາວະທຳທີ່ປະກອບດ້ວຍອຸເປກຂາ (໑໔໘໕,໑໕໙໙)
ນະ ອຸເປກຂາສະຫະຄະຕາ ທຳມາ. ສະພາວະທຳທີ່ບໍ່ປະກອບດ້ວຍອຸເປກຂາ (໑໔໘໖,໑໖໐໐)

## ໑໑. ກາມາວະຈະຣະທຸກະ

[໙໖] ກາມາວະຈະຣາ ທຳມາ. ສະພາວະທຳທີ່ເປັນກາມາວະຈອນ (໑໔໘໗,໑໖໐໑)
ນະ ກາມາວະຈະຣາ ທຳມາ. ສະພາວະທຳທີ່ບໍ່ເປັນກາມາວະຈອນ (໑໔໘໘,໑໖ ໐໔)

## ໑໘. ຣູປາວະຈະຣະທຸກະ

[໘໔] ຣູປາວະຈະຣາ ທຳມາ. — ສະພາວະທຳທີ່ເປັນຣູບປາວະຈອນ (໑໔໗໙,໑໖໐໓)

ນະ ຣູປາວະຈະຣາ ທຳມາ. — ສະພາວະທຳທີ່ບໍ່ເປັນຣູບປາວະຈອນ (໑໔໘໐,໑໖໐໔)

## ໑໓. ອະຣູປາວະຈະຣະທຸກະ

[໘໕] ອະຣູປາວະຈະຣາ ທຳມາ. — ສະພາວະທຳທີ່ເປັນອະຣູບປາວະຈອນ (໑໔໘໑,໑໖໐໕)

ນະ ອະຣູປາວະຈະຣາ ທຳມາ. — ສະພາວະທຳທີ່ບໍ່ເປັນອະຣູບປາວະຈອນ (໑໔໘໒,໑໖໐໖)

## ໑໔. ປະຣິຍາປັນນະທຸກະ

[໘໖] ປະຣິຍາປັນນາ ທຳມາ. — ສະພາວະທຳທີ່ນັບເນື່ອງໃນວັດຕະທຸກ (ໂລກິຍະ) (໑໔໘໓,໑໖໐໗)

ອະປະຣິຍາປັນນາ ທຳມາ. — ສະພາວະທຳທີ່ບໍ່ນັບເນື່ອງໃນວັດຕະທຸກ (ໂລກຸດຕະຣະ) (໑໔໘໔,໑໖໐໘)

## ໑໕. ນິຍຍານິກະທຸກະ

[໘໗] ນິຍຍານິກາ ທຳມາ. — ສະພາວະທຳທີ່ເປັນເຫດນຳອອກຈາກວັດຕະທຸກ (໑໔໘໕,໑໖໐໙)

ອະນິຍຍານິກາ ທຳມາ. — ສະພາວະທຳທີ່ບໍ່ເປັນເຫດນຳອອກຈາກວັດຕະທຸກ (໑໔໘໖,໑໖໑໐)

## ໑໖. ນິຍະຕະທຸກະ

[໘໘] ນິຍະຕາ ທຳມາ. — ສະພາວະທຳທີ່ໃຫ້ຜົນແນ່ນອນ (໑໔໘໗,໑໖໑໑)

ອະນິຍະຕາ ທຳມາ. — ສະພາວະທຳທີບໍ່ແນ່ນອນໂດຍອາການທັງສອງນັ້ນ (໑໔໘໘,໑໖໑໒)

## ໑໗. ສະອຸດຕະຣະທຸກະ

[໙໙] ສະອຸດຕະຣາ ທຳມາ. ສະພາວະທຳທີ່ມີທຳອື່ນຍິ່ງກວ່າ (໑໔໙໙,໑໖໑໓)

ອະນຸດຕະຣາ ທຳມາ. ສະພາວະທຳທີ່ບໍ່ມີທຳອື່ນຍິ່ງກວ່າ (໑໓໐໐,໑໖໑໔)

## ໑໘. ສະຣະນະທຸກະ

[໑໐໐] ສະຣະນາ ທຳມາ. ສະພາວະທຳທີ່ເປັນເຫດໃຫ້ສັດຮ້ອງໄຫ້ (໑໓໐໑,໑໖໑໕)

ອະຣະນາ ທຳມາ. ສະພາວະທຳທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ (໑໓໐໔,໑໖໑໖)

### ປິດຖິທຸກະ ຈົບ

### ອະພິທຳມະທຸກະມາຕິກາ ຈົບ

## ສູດຕັນຕິກະທຸກະມາຕິກາ (໔໔ ທຸກະ)

## ໑. ວິດຊາພາຄີທຸກະ

[໑໐໑] ວິດຊາພາຄີໂນ ທຳມາ. ທຳທີ່ມີສ່ວນແຫ່ງວິດຊາ (໑໓໐໓)

ອະວິດຊາພາຄີໂນ ທຳມາ. ທຳທີ່ມີສ່ວນແຫ່ງອະວິດຊາ (໑໓໐໔)

## ໔. ວິດຊູປະມະທຸກະ

[໑໐໔] ວິດຊູປະມາ ທຳມາ. ທຳທີ່ປຽບເໝືອນສາຍຟ້າ (໑໓໐໕)

ວະຊີຣູປະມາ ທຳມາ. ທຳທີ່ປຽບເໝືອນຟ້າຜ່າ (໑໓໐໖)

## ໓. ພາລະທຸກະ

[໑໐໓] ພາລາ ທຳມາ. ທຳທີ່ເຮັດໃຫ້ເປັນພານ (໑໓໐໗)

ປັນທິຕາ ທຳມາ. ທຳທີ່ເຮັດໃຫ້ເປັນບັນດິດ (໑໓໐໘)

## ໔. ກັນຫະທຸກະ

[໑໐໔] ກັນຫາ ທຳມາ. ທຳທີ່ດຳ (໑໓໐໙)
ສຸກກາ ທຳມາ. ທຳທີ່ຂາວ (໑໓໑໐)

## ໕. ຕະປະນີຍະທຸກະ

[໑໐໕] ຕະປະນີຍາ ທຳມາ. ທຳທີ່ເຮັດໃຫ້ຮ້ອນຮົນ (໑໓໑໑)
ອະຕະປະນີຍາ ທຳມາ. ທຳທີ່ບໍ່ເຮັດໃຫ້ຮ້ອນຮົນ (໑໓໑໒)

## ໖. ອະທິວະຈະນະທຸກະ

[໑໐໖] ອະທິວະຈະນາ ທຳມາ. ທຳທີ່ເປັນຊື່ (ສັດທະບັນຍັດ) (໑໓໑໓)
ອະທິວະຈະນະປະຖາ ທຳມາ. ທຳທີ່ເປັນເຫດແຫ່ງຊື່ (໑໓໑໓)

## ໗. ນິຣຸດຕິທຸກະ

[໑໐໗] ນິຣຸດຕິ ທຳມາ. ທຳທີ່ເປັນນິຣຸດຕິ (ສັດທະບັນຍັດ) (໑໓໑໔)
ນິຣຸດຕິປະຖາ ທຳມາ. ທຳທີ່ເປັນເຫດແຫ່ງນິຣຸດຕິ (໑໓໑໔)

## ໘. ປັນຍັດຕິທຸກະ

[໑໐໘] ປັນຍັດຕິ ທຳມາ. ທຳທີ່ເປັນບັນຍັດ (໑໓໑໕)
ປັນຍັດຕິປະຖາ ທຳມາ. ທຳທີ່ເປັນເຫດແຫ່ງບັນຍັດ (໑໓໑໕)

## ໙. ນາມະຣູປະທຸກະ

[໑໐໙] ນາມັນຈະ. ນາມ (໑໓໑໖)
ຣູປັນຈະ. ຣູບ (໑໓໑໗)

## ໑໐. ອະວິດຊາທຸກະ

[໑໑໐] ອະວິດຊາ ຈະ. ຄວາມບໍ່ຮູ້ (໑໓໑໘)
ພະວະຕັນຫາ ຈະ. ຄວາມປາຖະໜາພົບ (໑໓໑໙)

## ໑໑. ພະວະທິດຖິທຸກະ

[໑໑໑] ພະວະທິດຖິ ຈະ. ຄວາມເຫັນວ່າເກີດ (໑໓໒໐)
ວິພະວະທິດຖິ ຈະ. ຄວາມເຫັນວ່າບໍ່ເກີດ (໑໓໒໑)

## ໑໒. ສັດສະຕະທິດຖິທຸກະ

[໑໑໒] ສັດສະຕະທິດຖິ ຈະ. ຄວາມເຫັນວ່າທ່ຽງ (໑໓໒໒)
ອຸດເສທະທິດຖິ ຈະ. ຄວາມເຫັນວ່າຂາດສູນ (໑໓໒໓)

## ໑໓. ອັນຕະວາທິດຖິທຸກະ

[໑໑໓] ອັນຕະວາທິດຖິ ຈະ. ຄວາມເຫັນວ່າມີບ່ອນສຸດ (໑໓໒໔)
ອະນັນຕະວາທິດຖິ ຈະ. ຄວາມເຫັນວ່າບໍ່ມີບ່ອນສຸດ (໑໓໒໕)

## ໑໔. ປຸບພັນຕານຸທິດຖິທຸກະ

[໑໑໔] ປຸບພັນຕານຸທິດຖິ ຈະ. ຄວາມເຫັນຜາຣົບສ່ວນອະດີດ (໑໓໒໖)
ອະປະຣັນຕານຸທິດຖິ ຈະ. ຄວາມເຫັນຜາຣົບສ່ວນອະນາຄົດ (໑໓໒໗)

## ໑໕. ອະຫິຣິກະທຸກະ

[໑໑໕] ອະຫິຣິກະ.ຈະ. ຄວາມບໍ່ອາຍບາບ (໑໓໒໘)
ອະໂນດຕັບປັນຈະ. ຄວາມບໍ່ຍ້ານບາບ (໑໓໒໙)

## ໑໖. ຫິຣິທຸກະ

[໑໑໖] ຫິຣິ ຈະ. ຄວາມຮູ້ຈັກອາຍບາບ (໑໓໓໐)
ໂອດຕັບປັນຈະ. ຄວາມຮູ້ຈັກຍ້ານບາບ (໑໓໓໑)

## ໑໗. ໂທວະຈັດສະຕາທຸກະ

[໑໑໗] ໂທວະຈັດສະຕາ ຈະ. ຄວາມເປັນຜູ້ວ່າຍາກ (໑໓໓໒)
ປາປະມິດຕະຕາ ຈະ. ຄວາມເປັນຜູ້ມີມິດຊົ່ວ (໑໓໓໓)

## ໑໗. ໂສວະຈັດສະຕາທຸກະ

[໑໑໗] ໂສວະຈັດສະຕາ ຈະ. ຄວາມເປັນຜູ້ວ່າງ່າຍ (໑໖໖໔)
ກັນລະຍານະມິດຕະຕາ ຈະ. ຄວາມເປັນຜູ້ມີມິດດີ (໑໖໖໕)

## ໑໙. ອາປັດຕິກຸສະລະຕາທຸກະ

[໑໑໙] ອາປັດຕິກຸສະລະຕາ ຈະ. ຄວາມເປັນຜູ້ສະຫຼາດໃນອາບັດ (໑໖໖໖)
ອາປັດຕິວຸດຖານະກຸສະລະຕາ ຈະ. ຄວາມເປັນຜູ້ສະຫຼາດໃນການອອກຈາກອາບັດ (໑໖໖໗)

## ໔໐. ສະມາປັດຕິກຸສະລະຕາທຸກະ

[໑໔໐] ສະມາປັດຕິກຸສະລະຕາ ຈະ. ຄວາມເປັນຜູ້ສະຫຼາດໃນສະມາບັດ (໑໖໖໘)
ສະມາປັດຕິວຸດຖານະກຸສະລະຕາ ຈະ. ຄວາມເປັນຜູ້ສະຫຼາດໃນການອອກຈາກສະມາບັດ (໑໖໖໙)

## ໔໑. ທາຕຸກຸສະລະຕາທຸກະ

[໑໔໑] ທາຕຸກຸສະລະຕາ ຈະ. ຄວາມເປັນຜູ້ສະຫຼາດໃນທາດ (໑໖໔໐)
ມະນະສິການະກຸສະລະຕາ ຈະ. ຄວາມເປັນຜູ້ສະຫຼາດໃນມະນະສິການ (໑໖໔໑)

## ໔໔. ອາຍະຕະນະກຸສະລະຕາທຸກະ

[໑໔໔] ອາຍະຕະນະກຸສະລະຕາ ຈະ. ຄວາມເປັນຜູ້ສະຫຼາດໃນອາຍະຕະນະ (໑໖໔໔)
ປະຕິດຈະສະມຸບປາທະກຸສະລະຕາ ຈະ. ຄວາມເປັນຜູ້ສະຫຼາດໃນປະຕິດຈະສະມຸບບາດ (໑໖໔໖)

## ໔໖. ຖານະກຸສະລະຕາທຸກະ

[໑໔໖] ຖານະກຸສະລະຕາ ຈະ. ຄວາມເປັນຜູ້ສະຫຼາດໃນຖານະ (໑໖໔໔)
ອັດຖານະກຸສະລະຕາ ຈະ. ຄວາມເປັນຜູ້ສະຫຼາດໃນອະຖານະ (໑໖໔໕)

## ໘໔. ອາດຊະວະທຸກະ

[໑໘໔] ອາດຊະໂວ ຈະ. ຄວາມຊື່ຕົງ (໑໓໔໖)
ມັດທະໂວ ຈະ. ຄວາມອ່ອນໂຍນ (໑໓໔໗)

## ໘໕. ຂັນຕິທຸກະ

[໑໘໕] ຂັນຕິ ຈະ. ຂັນຕິ (໑໓໔໘)
ໂສຣັດຈັບຈະ. ໂສຣັດຈະ (໑໓໔໙)

## ໘໖. ສາຂັນລະຍະທຸກະ

[໑໘໖] ສາຂັນລະຍັນຈະ. ຄວາມເປັນຜູ້ມີວາຈາອ່ອນຫວານ (໑໓໕໐)
ປະຕິສັນຖາໂຣ ຈະ. ການປະຕິສັນຖານ (໑໓໕໑)

## ໘໗. ອິນທະຣິເຍສຸອະຄຸດຕະທະວາຣະຕາທຸກະ

[໑໘໗] ອິນທະຣິເຍສຸ ອະຄຸດຕັດທະວາຣະຕາ ຈະ. ຄວາມເປັນຜູ້ບໍ່ສັງລວມທະວານໃນອິນຊີທັງຫຼາຍ (໑໓໕໒)
ໂພຊະເນ ອະມັດຕັນຍຸຕາ ຈະ. ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ(໑໓໕໓)

## ໘໘. ອິນທະຣິເຍສຸຄຸດຕະທະວາຣະຕາທຸກະ

[໑໘໘] ອິນທະຣິເຍສຸ ຄຸດຕະທະວາຣະຕາ ຈະ. ຄວາມເປັນຜູ້ສັງລວມທະວານໃນອິນຊີທັງຫຼາຍ (໑໓໕໔)
ໂພຊະເນ ມັດຕັນຍຸຕາ ຈະ. ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ (໑໓໕໕)

## ໘໙. ມຸດຖະສັດຈະທຸກະ

[໑໘໙] ມຸດຖະສັດຈັນຈະ. ຄວາມເປັນຜູ້ມີສະຕິຫຼົງລືມ (໑໓໕໖)
ອະສຳປະຊັນຍັນຈະ. ຄວາມເປັນຜູ້ບໍ່ມີສຳປະຊັນຍະ (໑໓໕໗)

## ໓໐. ສະຕິສຳປະຊັນຍະທຸກະ

[໑໓໐] ສະຕິ ຈະ. ສະຕິ (໑໓໕໗)
ສຳປະຊັນຍັນຈະ. ສຳປະຊັນຍະ (໑໓໕໘)

## ໓໑. ປະຕິສັງຂານະພະລະທຸກະ

[໑໓໑] ປະຕິສັງຂານະພະລັນຈະ. ກຳລັງຄືການພິຈາລະນາ (໑໓໖໐)
ພາວະນາພະລັນຈະ. ກຳລັງຄືພາວະນາ (໑໓໖໑)

## ໓໒. ສະມະຖະວິປັດສະນາທຸກະ

[໑໓໒] ສະມະໂຖ ຈະ. ສະມະຖະ (໑໓໖໒)
ວິປັດສະນາ ຈະ. ວິປັດສະນາ (໑໓໖໓)

## ໓໓. ສະມະຖະນິມິດຕະທຸກະ

[໑໓໓] ສະມະຖະນິມິດຕັນຈະ. ນິມິດແຫ່ງສະມະຖະ (໑໓໖໔)
ປັກຄາຫະນິມິດຕັນຈະ. ນິມິດແຫ່ງຄວາມພຽນ (໑໓໖໕)

## ໓໔. ປັກຄາຫະທຸກະ

[໑໓໔] ປັກຄາໂຫ ຈະ. ຄວາມພຽນ (໑໓໖໖)
ອະວິກເຂໂປ ຈະ. ຄວາມບໍ່ຟຸ້ງຊ່ານ (໑໓໖໗)

## ໓໕. ສີລະວິປັດຕິທຸກະ

[໑໓໕] ສີລະວິປັດຕິ ຈະ. ຄວາມວິບັດແຫ່ງສີນ (໑໓໖໘)
ທິດຖິວິປັດຕິ ຈະ. ຄວາມວິບັດແຫ່ງທິດຖິ (໑໓໖໙)

## ໓໖. ສີນສຳປະທາທຸກະ

[໑໓໖] ສີລະສຳປະທາ ຈະ. ຄວາມສົມບູນແຫ່ງສີນ (໑໓໗໐)
ທິດຖິສຳປະທາ ຈະ. ຄວາມສົມບູນແຫ່ງທິດຖິ (໑໓໗໑)

## ໓໗. ສີລະວິສຸດທິທຸກະ

[໑໓໗] ສີລະວິສຸດທິ ຈະ. — ຄວາມບໍລິສຸດແຫ່ງສີນ (໑໓໗໒)

ທິດຖິວິສຸດທິ ຈະ. — ຄວາມບໍລິສຸດແຫ່ງທິດຖິ (໑໓໗໓)

## ໓໘. ທິດຖິວິສຸດທິໂຂປະນະທຸກະ

[໑໓໘] ທິດຖິວິສຸດທິ ໂຂ ປະນະ. — ຄວາມບໍລິສຸດແຫ່ງທິດຖິ (໑໓໗໔)

ຍະຖາທິດຖິດສະ ຈ ປະທານັງ. — ຄວາມພຽນຂອງບຸກຄົນຜູ້ມີຄວາມເຫັນບໍລິສຸດ (໑໓໗໕)

## ໓໙. ສັງເວຊະນີຍັດຖານະທຸກະ

[໑໓໙] ສັງເວໂຄ ຈະ ສັງເວຊະນີເຍສຸ ຖາເນສຸ. — ຄວາມສັງເວດໃນຖານະເປັນບ່ອນຕັ້ງແຫ່ງຄວາມສະລົດໃຈ (໑໓໗໖)

ສັງວິກຄັດສະ ຈະ ໂຍນິໂສ ປະທານັງ. — ຄວາມພຽນໂດຍແຍບຄາຍຂອງບຸກຄົນຜູ້ສະລົດໃຈ (໑໓໗໗)

## ໔໐. ອະສັນຕຸດຖິຕາກຸສະລະທຳມະທຸກະ

[໑໔໐] ອະສັນຕຸດຖິຕາ ຈະ ກຸສະເລສຸ ທຳເມສຸ. — ຄວາມເປັນຜູ້ບໍ່ສັນໂດດໃນທຳທີ່ເປັນກຸສົນ (໑໓໗໘)

ອັບປະຕິວານະຕາ ຈະ ປະທານັດສະມິງ. — ຄວາມເປັນຜູ້ບໍ່ທໍ້ຖອຍໃນຄວາມພຽນ (໑໓໗໙)

## ໔໑. ວິດຊາທຸກະ

[໑໔໑] ວິດຊາ ຈະ. — ຄວາມຮູ້ແຈ້ງ (໑໓໘໐)

ວິມຸດຕິ ຈະ. — ຄວາມຫຼຸດພົ້ນ (໑໓໘໑)

## ໔໒. ຂະເຍຍານະທຸກະ

[໑໔໒] ຂະເຍ ຍານັງ. — ຍານໃນອະຣິຍະມັກ (໑໓໘໒)

ອະນຸບປາເທ ຍານັງ. — ຍານໃນອະຣິຍະຜົນ (໑໓໘໓)

**ສູດຕັນຕິກະທຸກະມາຕິກາ ຈົບ**

**ມາຕິກາ ຈົບ**

# ໑. ຈິດຕຸບປາທະກັນ

## ກຸສົນບົດ

### ກາມາວະຈອນກຸສົນຈິດ

### ກຸສົນຈິດດວງທີ ໑

[໑] ສະພາວະທຳ ທີ່ເປັນກຸສົນ ເປັນແນວໃດ?

ຈິດທີ່ເປັນກາມາວະຈອນເຊິ່ງເປັນກຸສົນ ເກີດພ້ອມດ້ວຍໂສມະນັດ ປະກອບດ້ວຍປັນຍາ ມີຮູບເປັນອາລົມ ມີສຽງເປັນອາລົມ ມີກິ່ນເປັນອາລົມ ມີຣົດເປັນອາລົມ ມີໂຜດຖັບພະເປັນອາລົມ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ວິຕົກ ວິຈານ ປີຕິ ສຸຂະ ເອກັກຄະຕາ ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ມະນິນຊີ ໂສມະນັດສິນຊີ ຊີວິຕິນຊີ ສຳມາທິດຖິ ສຳມາສັງກັບປະ ສຳມາວາຍາມະ ສຳມາສະຕິ ສຳມາສະມາທິ ສັດທາພະລະ ວິຣິຍະພະລະ ສະຕິພະລະ ສະມາທິພະລະ ປັນຍາພະລະ ຫິຣິພະລະ ໂອດຕັບປະພະລະ ອະໂລພະ ອະໂທສະ ອະໂມຫະ ອະນະພິດຊາ ອັບພະຍາບາດ ສຳມາທິດຖິ ຫິຣິ ໂອດຕັບປະ ກາຍະປັດສັດທິ ຈິດຕະປັດສັດທິ ກາຍະລະຫຸຕາ ຈິດຕະລະຫຸຕາ ກາຍະມຸທຸຕາ ຈິດຕະມຸທຸຕາ ກາຍະກຳມັນຍະຕາ ຈິດຕະກຳມັນຍະຕາ ກາຍະປາຄຸນຍະຕາ ຈິດຕະປາຄຸນຍະຕາ ກາຍຸຊຸກະຕາ ຈິດຕຸຊຸກະຕາ ສະຕິ ສຳປະຊັນຍະ ສະມະຖະ ວິປັດສະນາ ປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນ ສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

### ບົດພາຊະນີ

[໒] ຜັດສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງ ໃນສະໄໝນັ້ນ ນີ້ຊື່ວ່າຜັດສະທີ່ເກີດຂຶ້ນໃນສະໄໝນັ້ນ

[໓] ເວທະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ອັນເກີດແຕ່ສຳຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າເວທະນາທີ່ເກີດຂຶ້ນ ໃນສະໄໝນັ້ນ

[໔] ສັນຍາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈໍາໄດ້ ກິຣິຍາທີ່ຈໍາໄດ້ ພາວະທີ່ຈໍາໄດ້ ອັນເກີດແຕ່ສໍາຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າສັນຍາທີ່ເກີດຂຶ້ນໃນສະໄໝນັ້ນ

[໕] ເຈຕະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ອັນເກີດແຕ່ສໍາຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ເຈຕະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໖] ຈິດ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນວິນຍານທາດ ທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າຈິດທີ່ເກີດຂຶ້ນໃນສະໄໝນັ້ນ

[໗] ວິຕົກ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມນຶກ ຄວາມນຶກໂດຍອາການຕ່າງ ໆ ຄວາມດໍາຣິ ຄວາມທີ່ຈິດແນບແໜ້ນໃນ ອາລົມຄວາມທີ່ຈິດແນບສະນິດໃນອາລົມ ຄວາມຍົກຈິດຂຶ້ນສູ່ອາລົມ ສໍາມາສັງກັບປະໃນສະໄໝນັ້ນ ນີ້ຊື່ວ່າວິຕົກທີ່ເກີດຂຶ້ນໃນສະໄໝນັ້ນ

[໘] ວິຈານ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕອງ ຄວາມພິຈາລະນາ ຄວາມຕາມພິຈາລະນາ ຄວາມເຂົ້າໄປພິຈາລະນາ ຄວາມທີ່ຈິດສືບຕໍ່ອາລົມ ຄວາມທີ່ຈິດເພ່ງອາລົມ ໃນສະໄໝນັ້ນ ນີ້ຊື່ວ່າວິຈານທີ່ເກີດຂຶ້ນໃນສະໄໝນັ້ນ

[໙] ປີຕິ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມອີ່ມເອີບ ຄວາມປາໂມດ ຄວາມຍິນດີຢ່າງຍິ່ງ ຄວາມບັນເທີງ ຄວາມຣ່າເຣີງ ຄວາມຣື່ນເຣີງ ຄວາມພໍໃຈ ຄວາມຕື່ນເຕັ້ນ ຄວາມທີ່ຈິດຊື່ນຊົມຍິນດີ ໃນສະໄໝນັ້ນ ນີ້ຊື່ວ່າ ປີຕິທີ່ເກີດຂຶ້ນໃນສະໄໝນັ້ນ

[໑໐] ສຸຂະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສໍາຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສໍາຣານເປັນສຸກ ອັນເກີດແຕ່ເຈໂຕສໍາຜັດ ກິຣິຍາສະເຫວີຍອາລົມທີ່ສໍາຣານເປັນສຸກ ອັນເກີດແຕ່ເຈໂຕສໍາຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ສຸຂະທີ່ເກີດຂຶ້ນໃນສະໄໝນັ້ນ

[໑໑] ເອກັກຄະຕາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ຟຸ້ງຊ່ານ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ສຳມາສະມາທິ ໃນສະໄໝນັ້ນ ນີ້ຊື່ວ່າ ເອກັກຄະຕາທີ່ເກີດຂື້ນໃນສະໄໝນັ້ນ

[໑໒] ສັດທິນຊີ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມເຊື່ອ ກິຣິຍາທີ່ເຊື່ອ ຄວາມປົງໃຈເຊື່ອ ຄວາມເຫຼື້ອມໃສຍິ່ງ ສັດທາ ສັດທິນຊີ ສັດທາພະລະ ໃນສະໄໝນັ້ນ ນີ້ຊື່ວ່າ ສັດທິນຊີ ທີ່ເກີດຂື້ນໃນສະໄໝນັ້ນ

[໑໓] ວິຣິຍິນຊີ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຄວາມດຸໝັ່ນຂັນແຂງ ຄວາມສູ້ຊົນ ຄວາມຂວນຂວາຍ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມທົນທານ ຄວາມເຂັ້ມແຂງ ຄວາມໝັ່ນ ຄວາມມຸ້ງໝັ້ນຢ່າງບໍ່ທໍ້ຖອຍ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມເອົາໃຈໃສ່ທຸຣະ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ສຳມາວາຍາມະ ໃນສະໄໝນັ້ນ ນີ້ຊື່ວ່າວິຣິຍິນຊີ ທີ່ເກີດຂື້ນໃນສະໄໝນັ້ນ

[໑໔] ສະຕິນຊີ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຄວາມຫວນຣະລຶກ ສະຕິ ກິຣິຍາທີ່ຣະລຶກ ຄວາມຊົງຈຳ ຄວາມບໍ່ເລື່ອນລອຍ ຄວາມບໍ່ຫຼົງລືມ ສະຕິ ສະຕິນຊີ ສະຕິພະລະ ສຳມາສະຕິ ໃນສະໄໝນັ້ນ ນີ້ ຊື່ວ່າ ສະຕິນຊີ ທີ່ເກີດຂື້ນໃນສະໄໝນັ້ນ

[໑໕] ສະມາທິນຊີ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ຟຸ້ງຊ່ານ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ສຳມາສະມາທິ ໃນສະໄໝນັ້ນ ນີ້ຊື່ວ່າ ສະມາທິນຊີທີ່ເກີດຂື້ນໃນສະໄໝນັ້ນ

[໑໖] ປັນຍິນຊີ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມເລືອກສັນ ຄວາມວິໄຈທຳ ຄວາມກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ້ງຊັດ ຄວາມຄົ້ນຄິດ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ຄວາມເຫັນແຈ້ງ ຄວາມຮູ້ດີ ປັນຍາເໝືອນປະຕັກ ປັນຍາ ປັນຍິນຊີ ປັນຍາພະລະ ປັນຍາເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະຫວ່າງຄືປັນຍາ ແສງສະຫວ່າງຄືປັນຍາ ປັນຍາເໝືອນປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ໃນສະໄໝນັ້ນ ນີ້ຊື່ວ່າ ປັນຍິນຊີທີ່ເກີດຂື້ນໃນສະໄໝນັ້ນ

[໑໗] ມະນິນຊີທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ທະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ມະນິນຊີທີ່ເກີດຂຶ້ນໃນສະໄໝນັ້ນ

[໑໘] ໂສມະນັດສິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຮານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຮານເປັນສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຮານເປັນສຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ໂສມະນັດສິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ

[໑໙] ຊີວິຕິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ອາຍຸ ຄວາມດຳຣົງຢູ່ ຄວາມເປັນໄປ ກິຣິຍາທີ່ໃຫ້ເປັນໄປ ອາການທີ່ສືບເນື່ອງກັນ ຄວາມດຳເນີນໄປ ຄວາມຫຼໍ່ລ້ຽງຊີວິດ ຊີວິຕິນຊີ ແຫ່ງສະພາວະທຳທີ່ບໍ່ເປັນຮູບເຫຼົ່ານັ້ນໃນສະໄໝນັ້ນ ນີ້ຊື່ວ່າ ຊີວິຕິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ

[໒໐] ສຳມາທິດຖິ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມເລືອກສັນ ຄວາມວິໄຈທຳ ຄວາມກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ້ງຊັດ ຄວາມຄົ້ນຄິດ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ຄວາມເຫັນແຈ້ງ ຄວາມຮູ້ດີ ປັນຍາເໝືອນປະຕັກ ປັນຍາ ປັນຍິນຊີ ປັນຍາພະລະ ປັນຍາ ເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະຫວ່າງຄືປັນຍາ ແສງສະຫວ່າງຄືປັນຍາ ປັນຍາເໝືອນປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ໃນສະໄໝນັ້ນ ນີ້ຊື່ວ່າ ສຳມາທິດຖິທີ່ເກີດຂຶ້ນໃນສະໄໝນັ້ນ

[໒໑] ສຳມາສັງກັບປະທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມນຶກ ຄວາມນຶກໂດຍອາການຕ່າງ ໆ ຄວາມດຳຣິ ຄວາມທີ່ຈິດແນບແໜ້ນໃນອາລົມ ຄວາມທີ່ຈິດແນບສະນິດໃນອາລົມ ຄວາມຍົກຈິດຂຶ້ນສູ່ອາລົມ ສຳມາສັງກັບປະໃນສະໄໝນັ້ນ ນີ້ຊື່ວ່າ ສຳມາສັງກັບປະທີ່ເກີດຂຶ້ນໃນສະໄໝນັ້ນ

[໒໒] ສຳມາວາຍາມະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຄວາມດຸໝັ່ນຂັນແຂງ ຄວາມສູ້ຊົນ ຄວາມຂວນຂວາຍ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມທົນທານ ຄວາມເຂັ້ມແຂງ ຄວາມໝັ່ນຄວາມມຸ້ງໝັ້ນຢ່າງບໍ່ທໍ້ຖອຍ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມເອົາໃຈໃສ່

ທຸຣະ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ສຳມາວາຍາມະ ໃນສະໄໝນັ້ນ ນີ້ຊື່ວ່າ ສຳມາວາຍາມະ ທີ່ເກີດຂຶ້ນໃນສະໄໝນັ້ນ

[໔໓] ສຳມາສະຕິ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຄວາມທວນຣະລຶກ ສະຕິ ກິຣິຍາທີ່ຣະລຶກ ຄວາມຊົງຈຳ ຄວາມບໍ່ເລື່ອນລອຍ ຄວາມບໍ່ຫຼົງລືມສະຕິ ສະຕິນຊີ ສະຕິພະລະ ສຳມາສະຕິ ໃນສະໄໝນັ້ນ ນີ້ຊື່ວ່າ ສຳມາສະຕິທີ່ເກີດຂຶ້ນໃນສະໄໝນັ້ນ

[໔໔] ສຳມາສະມາທິ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ຟຸ້ງຊ່ານ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ສຳມາສະມາທິໃນສະໄໝນັ້ນ ນີ້ຊື່ວ່າ ສຳມາສະມາທິທີ່ເກີດຂຶ້ນໃນສະໄໝນັ້ນ

[໔໕] ສັດທາພະລະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມເຊື່ອ ກິຣິຍາທີ່ເຊື່ອ ຄວາມປົງໃຈເຊື່ອ ຄວາມເຫຼື້ອມໃສຍິ່ງ ສັດທາ ສັດທິນຊີ ສັດທາພະລະ ໃນສະໄໝນັ້ນ ນີ້ຊື່ວ່າ ສັດທາພະລະທີ່ເກີດຂຶ້ນໃນສະໄໝນັ້ນ

[໔໖] ວິຣິຍະພະລະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຄວາມດຸໝັ່ນຂັນແຂງ ຄວາມສູ້ຊົນ ຄວາມຂວນຂວາຍ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມທົນທານ ຄວາມເຂັ້ມແຂງ ຄວາມໝັ່ນ ຄວາມ ມຸ້ງໝັ້ນຢ່າງບໍ່ທໍ້ຖອຍ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມເອົາໃຈໃສ່ທຸຣະ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ສຳມາວາຍາມະ ໃນສະໄໝນັ້ນ ນີ້ຊື່ວ່າ ວິຣິຍະພະລະທີ່ເກີດຂຶ້ນໃນສະໄໝນັ້ນ

[໔໗] ສະຕິພະລະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຄວາມທວນຣະລຶກ ສະຕິ ກິຣິຍາທີ່ຣະລຶກ ຄວາມຊົງຈຳ ຄວາມບໍ່ເລື່ອນລອຍ ຄວາມບໍ່ຫຼົງລືມສະຕິ ສະຕິນຊີ ສະຕິພະລະ ສຳມາສະຕິໃນສະໄໝນັ້ນ ນີ້ຊື່ວ່າ ສະຕິພະລະທີ່ເກີດຂຶ້ນໃນສະໄໝນັ້ນ

[໔໘] ສະມາທິພະລະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ຟຸ້ງຊ່ານ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ສຳມາສະມາທິ ໃນສະໄໝນັ້ນ ນີ້ຊື່ວ່າສະມາທິພະລະທີ່ເກີດຂຶ້ນໃນສະໄໝນັ້ນ

[໔໙] ປັນຍາພະລະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມເລືອກສັນ ຄວາມວິໄຈທຳ ຄວາມກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ້ງຊັດ ຄວາມຄົ້ນຄິດ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ຄວາມເຫັນແຈ້ງ ຄວາມຮູ້ດີ ປັນຍາເໝືອນປະຕັກ ປັນຍາ ປັນຍິນຊີ ປັນຍາພະລະ ປັນຍາເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະຫວ່າງຄືປັນຍາ ແສງສະຫວ່າງຄື ປັນຍາ ປັນຍາເໝືອນປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ໃນສະໄໝນັ້ນ ນີ້ຊື່ວ່າປັນຍາພະລະທີ່ເກີດຂຶ້ນໃນສະໄໝນັ້ນ

[໓໐] ຫິຣິພະລະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ກິຣິຍາທີ່ລະອາຍຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນລະອາຍ ກິຣິຍາທີ່ລະອາຍ ຕໍ່ການປະກອບສະພາວະທຳທີ່ເປັນອະກຸສົນເຊິ່ງເປັນບາບ ໃນສະໄໝນັ້ນ ນີ້ຊື່ວ່າ ຫິຣິພະລະທີ່ເກີດຂຶ້ນໃນສະໄໝນັ້ນ

[໓໑] ໂອດຕັບປະພະລະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ກິຣິຍາທີ່ຢ້ານຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນຢ້ານ ກິຣິຍາທີ່ຢ້ານຕໍ່ການປະກອບສະພາວະທຳທີ່ເປັນອະກຸສົນເຊິ່ງເປັນບາບ ໃນສະໄໝນັ້ນ ນີ້ຊື່ວ່າ ໂອດຕັບປະພະລະທີ່ເກີດຂຶ້ນໃນສະໄໝນັ້ນ

[໓໒] ອະໂລພະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມບໍ່ໂລບ ກິຣິຍາທີ່ບໍ່ໂລບ ພາວະທີ່ບໍ່ໂລບ ຄວາມບໍ່ກຳໜັດ ກິຣິຍາທີ່ບໍ່ກຳໜັດ ພາວະທີ່ບໍ່ກຳໜັດ ຄວາມບໍ່ເພ່ງເລັງ ກຸສົນມູນຄືອະໂລພະ ໃນສະໄໝນັ້ນ ນີ້ຊື່ວ່າອະໂລພະ ທີ່ເກີດຂຶ້ນໃນສະໄໝນັ້ນ

[໓໓] ອະໂທສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມບໍ່ຄິດປະທຸດສະຮ້າຍ ກິຣິຍາທີ່ບໍ່ຄິດປະທຸດສະຮ້າຍ ພາວະທີ່ບໍ່ຄິດປະທຸດສະຮ້າຍ ຄວາມບໍ່ພະຍາບາດ ຄວາມບໍ່ຄິດບຽດບຽນ ກຸສົນມູນຄື ອະໂທສະ ໃນສະໄໝນັ້ນ ນີ້ຊື່ວ່າ ອະໂທສະ ທີ່ເກີດຂຶ້ນໃນສະໄໝນັ້ນ

[໓໔] ອະໂມຫະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມເລືອກສັນ ຄວາມວິໄຈທຳ ຄວາມກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ້ງຊັດ ຄວາມຄົ້ນຄິດ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ຄວາມເຫັນແຈ້ງ ຄວາມຮູ້ດີ ປັນຍາເໝືອນປະຕັກ

ປັນຍາ ປັນຍິນຊີ ປັນຍາພະລະ ປັນຍາ ເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະຫວ່າງຄືປັນຍາ ແສງສະຫວ່າງຄືປັນຍາ ປັນຍາເໝືອນປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ກຸສົນມູນຄືອະໂມຫະ ໃນສະໄໝນັ້ນ ນີ້ຊື່ວ່າອະໂມຫະທີ່ເກີດຂຶ້ນໃນສະໄໝນັ້ນ

[໓໕] ອະນະພິດຊາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມບໍ່ໂລບ ກິຣິຍາທີ່ບໍ່ໂລບ ພາວະທີ່ບໍ່ໂລບ ຄວາມບໍ່ກຳໜັດ ກິຣິຍາທີ່ບໍ່ກຳໜັດ ພາວະທີ່ບໍ່ກຳໜັດ ຄວາມບໍ່ເພ່ງເລັງ ກຸສົນມູນຄື ອະໂລພະ ໃນສະໄໝນັ້ນ ນີ້ຊື່ວ່າອະນະພິດຊາທີ່ເກີດຂຶ້ນໃນສະໄໝນັ້ນ

[໓໖] ອັບພະຍາບາດ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມບໍ່ຄິດປະທຸດສະຮ້າຍ ກິຣິຍາທີ່ບໍ່ຄິດປະທຸດສະຮ້າຍ ພາວະທີ່ບໍ່ຄິດປະທຸດສະຮ້າຍ ຄວາມບໍ່ພະຍາບາດ ຄວາມບໍ່ຄິດບຽດບຽນ ກຸສົນມູນຄື ອະໂທສະ ໃນສະໄໝນັ້ນ ນີ້ຊື່ວ່າ ອັບພະຍາບາດທີ່ເກີດຂຶ້ນໃນສະໄໝນັ້ນ

[໓໗] ສຳມາທິດຖິ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມເລືອກສັນ ຄວາມວິໄຈທຳ ຄວາມ ກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ້ງຊັດ ຄວາມຄົ້ນຄິດ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ຄວາມເຫັນແຈ້ງ ຄວາມຮູ້ດີ ປັນຍາ ເໝືອນປະຕັກ ປັນຍາ ປັນຍິນຊີ ປັນຍາພະລະ ປັນຍາ ເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະຫວ່າງຄືປັນຍາ ແສງສະຫວ່າງຄືປັນຍາ ປັນຍາເໝືອນປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ໃນສະໄໝນັ້ນ ນີ້ຊື່ວ່າສຳມາທິດຖິທີ່ເກີດຂຶ້ນໃນສະໄໝນັ້ນ

[໓໘] ຫິຣິ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ກິຣິຍາທີ່ລະອາຍຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນລະອາຍ ກິຣິຍາທີ່ລະອາຍ ຕໍ່ການປະກອບສະພາວະທຳທີ່ເປັນອະກຸສົນເຊິ່ງເປັນບາບ ໃນສະໄໝນັ້ນ ນີ້ຊື່ວ່າຫິຣິທີ່ເກີດຂຶ້ນໃນສະໄໝນັ້ນ

[໓໙] ໂອດຕັບປະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ກິຣິຍາທີ່ຢ້ານຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນຢ້ານ ກິຣິຍາທີ່ຢ້ານຕໍ່ການປະກອບສະພາວະທຳທີ່ເປັນອະກຸສົນເຊິ່ງເປັນບາບ ໃນສະໄໝນັ້ນ ນີ້ຊື່ວ່າ ໂອດຕັບປະທີ່ເກີດຂຶ້ນໃນສະໄໝນັ້ນ

[໔໐] ກາຍະປັດສັດທິ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສະງົບ ຄວາມສະງົບຣະງັບ ກິຣິຍາທີ່ສະງົບ ກິຣິຍາທີ່ສະງົບຣະງັບ ພາວະທີ່ສະງົບຣະງັບແຫ່ງເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ໃນສະໄໝນັ້ນ ນີ້ຊື່ວ່າກາຍະປັດສັດທິທີ່ເກີດຂື້ນໃນສະໄໝນັ້ນ

[໔໑] ຈິດຕະປັດສັດທິ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສະງົບ ຄວາມສະງົບຣະງັບ ກິຣິຍາທີ່ສະງົບ ກິຣິຍາທີ່ສະງົບຣະງັບ ພາວະທີ່ສະງົບຣະງັບແຫ່ງວິນຍານຂັນ ໃນສະໄໝນັ້ນ ນີ້ຊື່ວ່າຈິດຕະປັດສັດທິທີ່ເກີດຂື້ນໃນສະໄໝນັ້ນ

[໔໒] ກາຍະລະຫຸຕາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມເບົາ ຄວາມວ່ອງໄວ ຄວາມບໍ່ເຊື່ອງຊ້າ ຄວາມບໍ່ໜັກແຫ່ງເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ໃນສະໄໝນັ້ນ ນີ້ຊື່ວ່າກາຍະລະຫຸຕາທີ່ເກີດຂື້ນໃນສະໄໝນັ້ນ

[໔໓] ຈິດຕະລະຫຸຕາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມເບົາ ຄວາມວ່ອງໄວ ຄວາມບໍ່ເຊື່ອງຊ້າ ຄວາມບໍ່ໜັກແຫ່ງວິນຍານຂັນ ໃນສະໄໝນັ້ນ ນີ້ຊື່ວ່າຈິດຕະລະຫຸຕາທີ່ເກີດຂື້ນໃນສະໄໝນັ້ນ

[໔໔] ກາຍະມຸທຸຕາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມອ່ອນ ພາວະທີ່ອ່ອນ ຄວາມບໍ່ແຂງ ຄວາມບໍ່ກະດ້າງແຫ່ງເວທະນາຂັນສັນ ຍາຂັນ ແລະສັງຂານຂັນ ໃນສະໄໝນັ້ນ ນີ້ຊື່ວ່າກາຍະມຸທຸຕາທີ່ເກີດຂື້ນໃນສະໄໝນັ້ນ

[໔໕] ຈິດຕະມຸທຸຕາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມອ່ອນ ພາວະທີ່ອ່ອນ ຄວາມບໍ່ແຂງ ຄວາມບໍ່ກະດ້າງແຫ່ງວິນຍານຂັນໃນ ສະໄໝນັ້ນ ນີ້ຊື່ວ່າ ຈິດຕະມຸທຸຕາທີ່ເກີດຂື້ນໃນສະໄໝນັ້ນ

[໔໖] ກາຍະກຳມັນຍະຕາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຄວນແກ່ວຽກງານ ກິຣິຍາທີ່ຄວນແກ່ວຽກງານ ພາວະທີ່ຄວນແກ່ວຽກງານແຫ່ງເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ໃນສະໄໝນັ້ນ ນີ້ຊື່ວ່າກາຍະກຳມັນຍະຕາທີ່ເກີດຂື້ນໃນສະໄໝນັ້ນ

[໔໗] ຈິດຕະກຳມັນຍະຕາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຄວນແກ່ວຽກງານ ກິຣິຍາທີ່ຄວນແກ່ວຽກງານ ພາວະທີ່ຄວນແກ່ວຽກງານແຫ່ງວິນຍານຂັນ ໃນສະໄໝນັ້ນ ນີ້ຊື່ວ່າ ຈິດຕະກຳມັນຍະຕາທີ່ເກີດຂື້ນໃນສະໄໝນັ້ນ

[໔໘] ກາຍະປາຄຸນຍະຕາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຄ່ອງແຄ່ວ ກິຣິຍາທີ່ຄ່ອງແຄ່ວ ພາວະທີ່ຄ່ອງແຄ່ວແຫ່ງເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ໃນສະໄໝນັ້ນ ນີ້ຊື່ວ່າ ກາຍະປາຄຸນຍະຕາທີ່ເກີດຂື້ນໃນສະໄໝນັ້ນ

[໔໙] ຈິດຕະປາຄຸນຍະຕາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຄ່ອງແຄ່ວ ກິຣິຍາທີ່ຄ່ອງແຄ່ວ ພາວະທີ່ຄ່ອງແຄ່ວແຫ່ງວິນຍານຂັນ ໃນສະໄໝນັ້ນ ນີ້ຊື່ວ່າ ຈິດຕະປາຄຸນຍະຕາທີ່ເກີດຂື້ນໃນສະໄໝນັ້ນ

[໕໐] ກາຍຸຊຸກະຕາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕົງ ກິຣິຍາທີ່ຕົງ ຄວາມບໍ່ຄົດ ຄວາມບໍ່ໂຄ້ງ ຄວາມບໍ່ງໍແຫ່ງເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ໃນສະໄໝນັ້ນ ນີ້ຊື່ວ່າກາຍຸຊຸກະຕາທີ່ເກີດຂື້ນໃນສະໄໝນັ້ນ

[໕໑] ຈິດຕຸຊຸກະຕາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕົງ ກິຣິຍາທີ່ຕົງ ຄວາມບໍ່ຄົດ ຄວາມບໍ່ໂຄ້ງ ຄວາມບໍ່ງໍແຫ່ງວິນຍານຂັນ ໃນສະໄໝນັ້ນ ນີ້ຊື່ວ່າ ຈິດຕຸຊຸກະຕາທີ່ເກີດຂື້ນໃນສະໄໝນັ້ນ

[໕໒] ສະຕິ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຄວາມຫວນຣະລຶກ ສະຕິ ກິຣິຍາທີ່ຣະລຶກ ຄວາມຊົງຈຳ ຄວາມບໍ່ເລື່ອນລອຍ ຄວາມບໍ່ຫຼົງລືມ ສະຕິ ສະຕິນຊຣີ ສະຕິພະລະ ສຳມາສະຕິ ໃນສະໄໝນັ້ນ ນີ້ຊື່ວ່າ ສະຕິທີ່ເກີດຂື້ນໃນສະໄໝນັ້ນ

[໕໓] ສຳປະຊັນຍະ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມເລືອກສັນ ຄວາມວິໄຈທຳ ຄວາມ ກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ້ງຊັດ ຄວາມຄົ້ນຄິດ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ຄວາມເຫັນແຈ້ງ ຄວາມຮູ້ດີ ປັນຍາ ເໝືອນປະຕັກ ປັນຍາ ປັນຍິນຊຣີ ປັນຍາພະລະ ປັນຍາເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະຫວ່າງຄືປັນຍາ ແສງສະຫວ່າງຄື ປັນຍາ ປັນຍາເໝືອນປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ໃນສະໄໝນັ້ນ ນີ້ຊື່ວ່າສຳປະຊັນຍະທີ່ເກີດຂື້ນໃນສະໄໝນັ້ນ

[໕໔] ສະມະຖະ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ຟຸ້ງຊ່ານ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊຣີ ສະມາທິພະລະ ສຳມາສະມາທິ ໃນສະໄໝນັ້ນ ນີ້ຊື່ວ່າສະມະຖະທີ່ເກີດຂື້ນໃນສະໄໝນັ້ນ

[໕໕] ວິປັດສະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມເລືອກສັນ ຄວາມວິໄຈທຳ ຄວາມ ກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ້ງຊັດ ຄວາມຄົ້ນຄິດ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ຄວາມເຫັນແຈ້ງ ຄວາມຮູ້ດີ ປັນຍາ ເໝືອນປະຕັກ ປັນຍາ ປັນຍິນຊີ ປັນຍາພະລະ ປັນຍາເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະຫວ່າງຄືປັນຍາ ແສງສະຫວ່າງຄືປັນຍາ ປັນຍາເໝືອນປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ໃນສະໄໝນັ້ນ ນີ້ຊື່ວ່າ ວິປັດສະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໕໖] ປັກຄາຫະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຄວາມດຸໝັ່ນຂັນແຂງ ຄວາມສູ້ຊົນ ຄວາມຂວນຂວາຍ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມທົນທານ ຄວາມເຂັ້ມແຂງ ຄວາມໝັ່ນ ຄວາມມຸ້ງໝັ້ນຢ່າງບໍ່ທໍ້ຖອຍ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມເອົາໃຈໃສ່ທຸຣະ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ສຳມາວາຍາມະ ໃນສະໄໝນັ້ນ ນີ້ຊື່ວ່າ ປັກຄາຫະ ທີ່ເກີດຂຶ້ນໃນສະໄໝນັ້ນ

[໕໗] ອະວິກເຂປະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ຟຸ້ງຊ່ານ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ສຳມາສະມາທິ ໃນສະໄໝນັ້ນ ນີ້ຊື່ວ່າ ອະວິກເຂປະທີ່ເກີດຂຶ້ນໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງ ອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ

ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

**ບົດພາຊະນີ ຈົບ**

**ປະຖະມະພານະວານ ຈົບ**

## ໂກດຖາສະວາຣະ

[໕໘] ຂັນ ໔ ອາຍະຕະນະ ໔ ທາດ ໔ ອາຫານ ໓ ອິນຊີ ໘ ຊານມີອົງ ໕ ມັກມີອົງ ໕ ພະລະ ໗ ເຫດ ໓ ຜັດສະ ໑ ເວທະນາ ໑ ສັນຍາ ໑ ເຈຕະນາ ໑ ຈິດ ໑ ເວທະນາຂັນ ໑ ສັນຍາຂັນ ໑ ສັງຂານຂັນ ໑ ວິນຍານຂັນ ໑ ມະນາຍະຕະນະ ໑ ມະນິນຊີ ໑ ມະໂນວິນຍານ

ທາດ ໑ ທຳມາຍະຕະນະ ໑ ແລະທຳມະທາດ ໑ ໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ ຊື່ວ່າເປັນກຸສົນ

[໕໙] ຂັນ ໔ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຂັນ ໔ ຄື ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ

[໖໐] ເວທະນາຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ເຈໂຕສຳຜັດໃນສະໄໝນັ້ນ ນີ້ຊື່ວ່າເວທະນາຂັນທີ່ເກີດຂຶ້ນໃນສະໄໝນັ້ນ

[໖໑] ສັນຍາຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ ໃນສະໄໝນັ້ນ ນີ້ຊື່ວ່າ ສັນຍາຂັນທີ່ເກີດຂຶ້ນໃນສະໄໝນັ້ນ

[໖໒] ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ວິຕົກ ວິຈານ ປີຕິ ເອກັກຄະຕາ ສັດທິນຊີ ວິຣິຍິນຊີ ສະຕິນຊີ ສະມາທິນຊີ ປັນຍິນຊີ ຊີວິຕິນຊີ ສຳມາທິດຖິ ສຳມາສັງກັບປະ ສຳມາວາຍາມະ ສຳມາສະຕິ ສຳມາສະມາທິ ສັດທາພະລະ ວິຣິຍະພະລະ ສະຕິພະລະ ສະມາທິພະລະ ປັນຍາພະລະ ຫິຣິພະລະ ໂອດຕັບປະພະລະ ອະໂລພະ ອະໂທສະ ອະໂມຫະ ອະນະພິດຊາ ອັບພະຍາບາດ ສຳມາທິດຖິ ຫິຣິ ໂອດຕັບປະ ກາຍະປັດສັດທິ ຈິດຕະປັດສັດທິ ກາຍະລະຫຸຕາ ຈິດຕະລະຫຸຕາ ກາຍະມຸທຸຕາ ຈິດຕະມຸທຸຕາ ກາຍະກຳມັນຍະຕາ ຈິດຕະກຳມັນຍະຕາ ກາຍະປາຄຸນຍະຕາ ຈິດຕະປາຄຸນຍະຕາ ກາຍຸຊຸກະຕາ ຈິດຕຸຊຸກະຕາ ສະຕິ ສຳປະຊັນຍະ ສະມະຖະ ວິປັດສະນາ ປັກຄາຫະ ແລະອະວິກເຂປະ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນ ນີ້ຊື່ວ່າ ສັງຂານຂັນທີ່ເກີດຂຶ້ນໃນສະໄໝນັ້ນ

[໖໓] ວິນຍານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ວິນຍານຂັນທີ່ເກີດຂຶ້ນໃນສະໄໝນັ້ນ

ສະພາວະທຳເຫຼົ່ານີ້ຊື່ວ່າຂັນ ໔ ທີ່ເກີດຂຶ້ນໃນສະໄໝນັ້ນ

[໖໔] ອາຍະຕະນະ ໒ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ອາຍະຕະນະ ໒ ຄື ມະນາຍະຕະນະ ແລະທຳມາຍະຕະນະ

[໓໔໑] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ຯລຯ ບັນລຸທຸຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ບັນລຸປະຖົມຊານ ຯລຯ ບັນລຸປັນຈະມະຊານອັນເປັນອັບປະນິຫິຕະ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

**ອັບປະນິຫິຕະ ຈົບ**

## ອັບປະນິຫິຕະມູລະກະປະຕິປະທາ

[໓໔໒] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານອັນເປັນອັບປະນິຫິຕະ ເປັນທຸກຂາປະຕິປະທາທັນທາພິນຍາຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

[໓໔໓] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານອັນເປັນອັບປະນິຫິຕະ ເປັນທຸກຂາປະຕິປະທາຂິບປາພິນຍາຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

[໓໔໔] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານອັນເປັນອັບປະນິຫິຕະ ເປັນສຸຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

[໓໔໕] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸ

ປະຖົມຊານອັນເປັນອັບປະນິຫິຕະ ເປັນສຸຂາປະຕິປະທາຂິບປາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯลฯ ອະວິກເຂປະ ກໍເກີດຂຶ້ນ ฯลฯ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

[໓໕໖] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ฯลฯ ບັນລຸທຸຕິຍະຊານ ฯลฯ ບັນລຸຕະຕິຍະຊານ ฯลฯ ບັນລຸຈະຕຸດຖະຊານ ฯลฯ ບັນລຸປະຖົມຊານ ฯลฯ ບັນລຸປັນຈະມະຊານອັນເປັນອັບປະນິຫິຕະ ເປັນທຸກຂາປະຕິປະທາທັນທາພິນຍາ ฯลฯ ອັນເປັນອັບປະນິຫິຕະ ເປັນທຸກຂາປະຕິປະທາຂິບປາພິນຍາ ฯลฯ ອັນເປັນອັບປະນິຫິຕະ ເປັນສຸຂາປະຕິປະທາທັນທາພິນຍາ ฯลฯ ອັນເປັນອັບປະນິຫິຕະ ເປັນສຸຂາປະຕິປະທາຂິບປາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯลฯ ອະວິກເຂປະ ກໍເກີດຂຶ້ນ ฯลฯ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກຸສົນ

**ອັບປະນິຫິຕະມູລະກະປະຕິປະທາ ຈົບ**

## ມະຫາໄນ ໒໐

[໓໕໗] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນມັກທີ່ເປັນໂລກຸດຕະຣະ ฯลฯ ຈະເລີນສະຕິປັດຖານທີ່ເປັນໂລກຸດຕະຣະ ฯลฯ ຈະເລີນສຳມັບປະທານທີ່ເປັນໂລກຸດຕະຣະ ฯลฯ ຈະເລີນອິດທິບາດທີ່ເປັນໂລກຸດຕະຣະ ฯลฯ ຈະເລີນອິນຊີທີ່ເປັນໂລກຸດຕະຣະ ฯลฯ ຈະເລີນພະລະທີ່ເປັນໂລກຸດຕະຣະ ฯลฯ ຈະເລີນໂພດຊົງທີ່ເປັນໂລກຸດຕະຣະ ฯลฯ ຈະເລີນສັດຈະທີ່ເປັນໂລກຸດຕະຣະ ฯลฯ ຈະເລີນສະມະຖະທີ່ເປັນໂລກຸດຕະຣະ ฯลฯ ຈະເລີນທຳທີ່ເປັນໂລກຸດຕະຣະ ฯลฯ ຈະເລີນຂັນທີ່ເປັນໂລກຸດຕະຣະ ฯลฯ ຈະເລີນອາຍະຕະນະທີ່ເປັນໂລກຸດຕະຣະ ฯลฯ ຈະເລີນທາດທີ່ເປັນໂລກຸດຕະຣະ ฯลฯ ຈະເລີນອາຫານທີ່ເປັນໂລກຸດຕະຣະ ฯลฯ ຈະເລີນຜັດສະທີ່ເປັນໂລກຸດຕະຣະ ฯลฯ ຈະເລີນເວທະນາທີ່ເປັນໂລກຸດຕະຣະ ฯลฯ ຈະເລີນສັນຍາທີ່ເປັນໂລກຸດຕະຣະ ฯลฯ ຈະເລີນເຈຕະນາທີ່ເປັນໂລກຸດຕະຣະ ฯลฯ ຈະເລີນຈິດທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມ ເບື້ອງຕົ້ນ ສະຫງັດຈາກກາມ ฯลฯ ບັນລຸປະຖົມຊານ ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ฯลฯ ອະວິກເຂປະກໍເກີດຂຶ້ນ ฯลฯ ສະພາວະທຳເຫຼົ່ານີ້ ຊື່ວ່າ ເປັນກຸສົນ

**ມະຫາໄນ ໒໐ ຈົບ**

## ອະທິບໍດີ

[໓໕໗] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານ ເປັນສັນທາທິປະໄຕ ເປັນທຸກຂາປະຕິປະທາທັນທາພິນຍາ ຯລຯ ເປັນວິຣິຍາທິປະໄຕ ຯລຯ ເປັນຈິດຕາທິປະໄຕ ຯລຯ ເປັນວິມັງສາທິປະໄຕ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

[໓໕໘] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ຍ້ອນວິຕົກວິຈານສະງົບຣະງັບໄປແລ້ວ ຯລຯ ບັນລຸທຸຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸຈະຕຸດຖະຊານ ຯລຯ ບັນລຸປະຖົມຊານ ຯລຯ ບັນລຸປັນຈະມະຊານ ເປັນສັນທາທິປະໄຕ ເປັນທຸກຂາປະຕິປະທາທັນທາພິນຍາ ຯລຯ ເປັນວິຣິຍາທິປະໄຕ ຯລຯ ເປັນຈິດຕາທິປະໄຕ ຯລຯ ເປັນວິມັງສາທິປະໄຕ ຯລຯ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

[໓໖໐] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນມັກທີ່ເປັນໂລກຸດຕະຣະ ຯລຯ ຈະເລີນສະຕິປັດຖານທີ່ເປັນໂລກຸດຕະຣະ ຯລຯ ຈະເລີນສຳມັບປະທານທີ່ເປັນໂລກຸດຕະຣະ ຯລຯ ຈະເລີນອິດທິບາດທີ່ເປັນໂລກຸດຕະຣະ ຯລຯ ຈະເລີນອິນຊີທີ່ເປັນໂລກຸດຕະຣະ ຯລຯ ຈະເລີນພະລະທີ່ເປັນໂລກຸດຕະຣະ ຯລຯ ຈະເລີນໂພດຊົງທີ່ເປັນໂລກຸດຕະຣະ ຯລຯ ຈະເລີນສັດຈະທີ່ເປັນໂລກຸດຕະຣະ ຯລຯ ຈະເລີນສະມະຖະ ທີ່ເປັນໂລກຸດຕະຣະ ຯລຯ ຈະເລີນທຳທີ່ເປັນໂລກຸດຕະຣະ ຯລຯ ຈະເລີນຂັນທີ່ເປັນໂລກຸດຕະຣະ ຯລຯ ຈະເລີນອາຍະຕະນະທີ່ເປັນໂລກຸດຕະຣະ ຯລຯ ຈະເລີນທາດທີ່ເປັນໂລກຸດຕະຣະ ຯລຯ ຈະເລີນ ອາຫານທີ່ເປັນໂລກຸດຕະຣະ ຯລຯ ຈະເລີນຜັດສະທີ່ເປັນໂລກຸດຕະຣະ ຯລຯ ຈະເລີນເວທະນາທີ່ເປັນໂລກຸດຕະຣະ ຯລຯ ຈະເລີນສັນຍາທີ່ເປັນ ໂລກຸດຕະຣະ ຯລຯ ຈະເລີນເຈຕະນາທີ່ເປັນໂລກຸດຕະຣະ ຯລຯ ຈະເລີນຈິດທີ່ເປັນໂລກຸດຕະຣະ ອັນເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອລະທິດຖິ ເພື່ອບັນລຸພູມເບື້ອງຕົ້ນ ສະຫງັດຈາກກາມ ຯລຯ ບັນລຸປະຖົມຊານອັນເປັນສັນທາທິປະໄຕ ຯລຯ ເປັນວິຣິຍາທິປະໄຕ ຯລຯ ເປັນຈິດຕາທິປະໄຕ ຯລຯ ເປັນວິມັງສາທິປະໄຕ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

**ອະທິບໍດີ ຈົບ**

## ມັກຄະຈິດດວງທີ ໔

[໓໒໑] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອບັນລຸພູມທີ ໔ ເພື່ອເຮັດການຣາຄະ ແລະພະຍາບາດໃຫ້ເບົາບາງ ສະຫງັດຈາກການ ຯລຯ ບັນລຸປະຖົມຊານ ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດໃນສະໄໝນັ້ນ ຜັດສະ ຯລຯ ອັນຍິນຊີ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

## ມັກຄະຈິດດວງທີ ໓

[໓໒໔] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະ ເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອບັນລຸພູມທີ ໓ ເພື່ອລະການຣາຄະ ແລະພະຍາບາດໂດຍບໍ່ມີສ່ວນເຫຼືອສະຫງັດຈາກການ ຯລຯ ບັນລຸປະຖົມຊານ ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອັນຍິນຊີ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

## ມັກຄະຈິດດວງທີ ໔

[໓໒໓] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນຊານທີ່ເປັນໂລກຸດຕະຣະເຊິ່ງເປັນເຫດນຳອອກຈາກວັດຕະທຸກໃຫ້ເຖິງນິບພານ ເພື່ອບັນລຸພູມທີ ໔ ເພື່ອລະຣູບປະຣາຄະ ອະຣູບປະຣາຄະ ມານະ ອຸດທັດຈະ ແລະອະວິດຊາ ໂດຍບໍ່ມີສ່ວນເຫຼືອ ສະຫງັດຈາກການ ຯລຯ ບັນລຸປະຖົມຊານ ເປັນທຸກຂາປະຕິປະທາທັນທາພິນຍາ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອັນຍິນຊີ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

[໓໒໔] ອັນຍິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມເລືອກສັນ ຄວາມວິໄຈທຳ ຄວາມ ກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ້ງຊັດ ຄວາມຄົ້ນຄິດ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ຄວາມເຫັນແຈ້ງ ຄວາມຮູ້ດີ ປັນຍາ ເໝືອນປະຕັກ ປັນຍາ ປັນຍິນຊີ ປັນຍາພະລະ ປັນຍາເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມ

ສະຫວ່າງຄືປັນຍາ ແສງສະຫວ່າງຄືປັນຍາ ປັນຍາເໝືອນປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທຳມະວິໄຈຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ເພື່ອຮູ້ທຳທີ່ຮູ້ແລ້ວ ເພື່ອເຫັນທຳທີ່ເຫັນແລ້ວ ເພື່ອບັນລຸທຳທີ່ບັນລຸແລ້ວ ເພື່ອຮູ້ທຳທີ່ຮູ້ແລ້ວ ເພື່ອເຮັດໃຫ້ແຈ້ງທຳທີ່ເຮັດໃຫ້ແຈ້ງແລ້ວ ໃນສະໄໝນັ້ນ ນີ້ຊື່ວ່າ ອັນຍິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຫຼືສະພາວະທຳທີ່ບໍ່ເປັນຮູບເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

**ໂລກຸດຕະຣະຈິດ ຈົບ**

## ອະກຸສົນບົດ

## ອະກຸສົນຈິດ ໑໘

## ອະກຸສົນຈິດດວງທີ ໑

[໓໖໕] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດທີ່ເປັນອະກຸສົນ ເກີດພ້ອມດ້ວຍໂສມະນັດ ສຳປະຍຸດດ້ວຍທິດຖິ ມີຮູບເປັນອາລົມ ມີສຽງເປັນອາລົມ ມີກິ່ນເປັນອາລົມ ມີຣົດເປັນອາລົມ ມີໂຜດຖັບພະເປັນອາລົມ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ວິຕົກ ວິຈານ ປີຕິ ສຸກ ເອກັກຄະຕາ ວິຣິຍິນຊີ ສະມາທິນຊີ ມະນິນຊີ ໂສມະນັດສິນຊີ ຊີວິຕິນຊີ ມິດສາທິດຖິ ມິດສາສັງກັບປະ ມິດສາວາຍາມະ ມິດສາສະມາທິ ວິຣິຍະພະລະ ສະມາທິພະລະ ອະຫິຣິກະພະລະ ອະໂນດຕັບປະພະລະ ໂລພະ ໂມຫະ ອະພິດຊາ ມິດສາທິດຖິ ອະຫິຣິກະ ອະໂນດຕັບປະ ສະມະຖະ ປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳ ເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

[໓໖໖] ຜັດສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງ ໃນສະໄໝນັ້ນ ນີ້ຊື່ວ່າ ຜັດສະທີ່ເກີດຂຶ້ນໃນສະໄໝນັ້ນ

[໓໖໗] ເວທະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ອັນເກີດແຕ່ສຳຜັດແຫ່ງມະໂນທາດທີ່ເໝາະສົມກັນ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາ

ສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ເວທະນາທີ່ເກີດຂື້ນໃນສະໄໝນັ້ນ

[໓໖໗] ສັນຍາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ ອັນເກີດແຕ່ສຳຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ສັນຍາທີ່ເກີດຂື້ນໃນສະໄໝນັ້ນ

[໓໖໙] ເຈຕະນາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ອັນເກີດແຕ່ສຳຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ເຈຕະນາທີ່ເກີດຂື້ນໃນສະໄໝນັ້ນ

[໓໗໐] ຈິດ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ຈິດທີ່ເກີດຂື້ນ ໃນສະໄໝນັ້ນ

[໓໗໑] ວິຕົກ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມນຶກ ຄວາມນຶກໂດຍອາການຕ່າງ ໆ ຄວາມດຳຣິ ຄວາມທີ່ຈິດແນບແໜ້ນໃນ ອາລົມ ຄວາມທີ່ຈິດແນບສະນິດໃນອາລົມ ຄວາມຍົກຈິດຂື້ນສູ່ອາລົມ ມິດສາສັງກັບປະໃນສະໄໝນັ້ນ ນີ້ຊື່ວ່າ ວິຕົກທີ່ເກີດຂື້ນໃນສະໄໝນັ້ນ

[໓໗໒] ວິຈານ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕອງ ຄວາມພິຈາລະນາ ຄວາມຕາມພິຈາລະນາ ຄວາມເຂົ້າໄປພິຈາລະນາ ຄວາມທີ່ຈິດສືບຕໍ່ອາລົມ ຄວາມທີ່ຈິດເພ່ງອາລົມ ໃນສະໄໝນັ້ນ ນີ້ຊື່ວ່າ ວິຈານທີ່ເກີດຂື້ນ ໃນສະໄໝນັ້ນ

[໓໗໓] ປີຕິ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມອີ່ມເອີບ ຄວາມປາໂມດ ຄວາມຍິນດີຢ່າງຍິ່ງ ຄວາມບັນເທີງ ຄວາມຣ່າເຣີງ ຄວາມຣື່ນເຣີງ ຄວາມພໍໃຈ ຄວາມຕື່ນເຕັ້ນ ຄວາມທີ່ຈິດຊື່ນຊົມຍິນດີ ໃນສະໄໝນັ້ນ ນີ້ຊື່ວ່າ ປີຕິທີ່ເກີດຂື້ນໃນສະໄໝນັ້ນ

[໓໗໔] ສຸກ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ເຈໂຕສຳຜັດໃນສະໄໝນັ້ນ ນີ້ຊື່ວ່າ ສຸກທີ່ເກີດຂື້ນໃນສະໄໝນັ້ນ

[໖໗໔] ເອກັກຄະຕາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ຟຸ້ງຊ່ານ ພາວະທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ມິດສາສະມາທິ ໃນສະໄໝນັ້ນ ນີ້ຊື່ວ່າ ເອກັກຄະຕາທີ່ເກີດຂຶ້ນໃນສະໄໝນັ້ນ

[໖໗໕] ວິຣິຍິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຄວາມດຸໝັ່ນຂັນແຂງ ຄວາມສູ້ຊົນ ຄວາມຂວນຂວາຍ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມທົນທານ ຄວາມເຂັ້ມແຂງ ຄວາມໝັ່ນ ຄວາມມຸ້ງໝັ້ນຢ່າງບໍ່ທໍ້ຖອຍ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມເອົາໃຈໃສ່ທຸຣະ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ມິດສາວາຍາມະ ໃນສະໄໝນັ້ນ ນີ້ຊື່ວ່າ ວິຣິຍິນຊີທີ່ເກີດຂຶ້ນໃນສະໄໝນັ້ນ

[໖໗໗] ສະມາທິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ຟຸ້ງຊ່ານ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ມິດສາສະມາທິໃນສະໄໝນັ້ນ ນີ້ຊື່ວ່າ ສະມາທິນຊີທີ່ເກີດຂຶ້ນໃນສະໄໝນັ້ນ

[໖໗໘] ມະນິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ມະນິນຊີທີ່ເກີດຂຶ້ນໃນສະໄໝນັ້ນ

[໖໗໙] ໂສມະນັດສິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ໂສມະນັດສິນຊີທີ່ເກີດຂຶ້ນໃນສະໄໝນັ້ນ

[໖໘໐] ຊີວິຕິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ອາຍຸ ຄວາມດຳຣົງຢູ່ ຄວາມເປັນໄປ ກິຣິຍາທີ່ໃຫ້ເປັນໄປ ອາການທີ່ສືບເນື່ອງກັນ ຄວາມດຳເນີນໄປ ຄວາມຫຼໍ່ລ້ຽງຊີວິດ ຊີວິຕິນຊີແຫ່ງສະພາວະທຳທີ່ບໍ່ເປັນຮູບເຫຼົ່ານັ້ນ ໃນສະໄໝນັ້ນ ນີ້ຊື່ວ່າ ຊີວິຕິນຊີທີ່ເກີດຂຶ້ນໃນສະໄໝນັ້ນ

[໖໘໑] ມິດສາທິດຖິ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ທິດຖິ ຄວາມເຫັນຜິດ ຣົກທຶບຄືທິດຖິ ກັນດານຄືທິດຖິ ຄວາມເຫັນອັນເປັນຂ້າເສິກ ຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຍຶດຖື ຄວາມຍຶດໝັ້ນ ຄວາມຖືຜິດ

ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິທີ່ເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຍຶດຖືໂດຍຄາດເຄື່ອນ ໃນສະໄໝນັ້ນ ນີ້ຊື່ວ່າ ມິດສາທິດຖິທີ່ເກີດຂຶ້ນໃນສະໄໝນັ້ນ

[໓໗໔] ມິດສາສັງກັບປະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມນຶກ ຄວາມນຶກໂດຍອາການຕ່າງ ໆ ຄວາມດຳຣິ ຄວາມທີ່ຈິດແນບແໜ້ນໃນອາລົມ ຄວາມທີ່ຈິດແນບສະນິດໃນອາລົມ ຄວາມຍົກຈິດຂຶ້ນສູ່ອາລົມ ມິດສາສັງກັບປະໃນສະໄໝນັ້ນ ນີ້ຊື່ວ່າ ມິດສາສັງກັບປະທີ່ເກີດຂຶ້ນໃນສະໄໝນັ້ນ

[໓໗໓] ມິດສາວາຍາມະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຄວາມດຸໝັ່ນຂັນແຂງ ຄວາມສູ້ຊົນ ຄວາມຂວນຂວາຍ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມທົນທານ ຄວາມເຂັ້ມແຂງ ຄວາມໝັ່ນ ຄວາມມຸ້ງໝັ້ນຢ່າງບໍ່ທໍ້ຖອຍ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມເອົາໃຈ ໃສ່ທຸຣະ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ມິດສາວາຍາມະ ໃນສະໄໝນັ້ນ ນີ້ຊື່ວ່າ ມິດສາວາຍາມະ ທີ່ເກີດຂຶ້ນໃນສະໄໝນັ້ນ

[໓໗໘] ມິດສາສະມາທິ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ ຟຸ້ງຊ່ານ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ມິດສາສະມາທິ ໃນສະໄໝນັ້ນ ນີ້ຊື່ວ່າ ມິດສາສະມາທິທີ່ເກີດຂຶ້ນໃນສະໄໝນັ້ນ

[໓໗໕] ວິຣິຍະພະລະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຄວາມດຸໝັ່ນຂັນແຂງ ຄວາມສູ້ຊົນ ຄວາມຂວນຂວາຍ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມທົນທານ ຄວາມເຂັ້ມແຂງ ຄວາມໝັ່ນ ຄວາມມຸ້ງໝັ້ນຢ່າງບໍ່ທໍ້ຖອຍ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມເອົາໃຈໃສ່ ທຸຣະ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ມິດສາວາຍາມະ ໃນສະໄໝນັ້ນ ນີ້ຊື່ວ່າ ວິຣິຍະພະລະທີ່ເກີດຂຶ້ນໃນສະໄໝນັ້ນ

[໓໗໖] ສະມາທິພະລະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ຟຸ້ງຊ່ານ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ມິດສາສະມາທິ ໃນ ສະໄໝນັ້ນ ນີ້ຊື່ວ່າ ສະມາທິພະລະທີ່ເກີດຂຶ້ນໃນສະໄໝນັ້ນ

[໓໗໗] ອະຫິຣິກະພະລະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ກິຣິຍາທີ່ບໍ່ລະອາຍຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນລະອາຍ ກິຣິຍາທີ່ບໍ່ລະອາຍຕໍ່ການປະກອບສະພາວະທຳທີ່ເປັນອະກຸສົນເຊິ່ງເປັນບາບ ໃນສະໄໝນັ້ນ ນີ້ຊື່ວ່າ ອະຫິຣິກະພະລະທີ່ເກີດຂຶ້ນໃນສະໄໝນັ້ນ

[໓໗໗] ອະໂນດັບປະພະລະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ກິຣິຍາທີ່ບໍ່ຢ້ານຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນຢ້ານ ກິຣິຍາທີ່ບໍ່ຢ້ານຕໍ່ການປະກອບສະພາວະທຳທີ່ເປັນອະກຸສົນເຊິ່ງເປັນບາບ ໃນສະໄໝນັ້ນ ນີ້ຊື່ວ່າ ອະໂນດັບປະພະລະທີ່ເກີດຂຶ້ນໃນສະໄໝນັ້ນ

[໓໗໘] ໂລພະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມໂລບ ກິຣິຍາທີ່ໂລບ ພາວະທີ່ໂລບ ຄວາມກຳໜັດ ກິຣິຍາທີ່ກຳໜັດ ພາວະທີ່ກຳໜັດຄວາມເພ່ງເລັງ ອະກຸສົນມູນຄືໂລພະ ໃນສະໄໝນັ້ນ ນີ້ຊື່ວ່າ ໂລພະທີ່ເກີດຂຶ້ນໃນສະໄໝນັ້ນ

[໓໘໐] ໂມຫະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມບໍ່ຮູ້ ຄວາມບໍ່ເຫັນ ຄວາມບໍ່ຕັດສະຮູ້ ຄວາມບໍ່ຮູ້ໂດຍສົມຄວນ ຄວາມບໍ່ຮູ້ຕາມຄວາມເປັນຈິງ ຄວາມບໍ່ຮູ້ແຈ້ງຕະຫຼອດ ຄວາມບໍ່ຖືເອົາໃຫ້ຖືກຕ້ອງ ຄວາມບໍ່ຢັ່ງລົງຢ່າງຮອບຄອບຄວາມບໍ່ພິນິດ ຄວາມບໍ່ພິຈາລະນາ ການບໍ່ເຮັດໃຫ້ປະຈັກ ຄວາມຊາມປັນຍາ ຄວາມໂງ່ຈ້າຄວາມບໍ່ຮູ້ແຈ້ງ ຄວາມຫຼົງ ຄວາມຫຼຸ່ມຫຼົງ ຄວາມຫຼົງໄຫຼ ອະວິດຊາ ອະວິດໂຊຄະ ອະວິດຊາໂຍຄະ ອະວິດຊານຸໄສ ປະຣິຍຸດຖານະກິເລດຄືອະວິດຊາ ຫຼິ່ມຄືອະວິດຊາ ອະກຸສົນມູນຄືໂມຫະ ໃນສະໄໝນັ້ນ ນີ້ຊື່ວ່າໂມຫະທີ່ເກີດຂຶ້ນໃນສະໄໝນັ້ນ

[໓໘໑] ອະພິດຊາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມໂລບ ກິຣິຍາທີ່ໂລບ ພາວະທີ່ໂລບ ຄວາມກຳໜັດ ກິຣິຍາທີ່ກຳໜັດ ພາວະທີ່ກຳໜັດຄວາມເພ່ງເລັງ ອະກຸສົນມູນຄືໂລພະ ໃນສະໄໝນັ້ນ ນີ້ຊື່ວ່າ ອະພິດຊາທີ່ເກີດຂຶ້ນໃນ ສະໄໝນັ້ນ

[໓໘໒] ມິດສາທິດຖິ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ທິດຖິ ຄວາມເຫັນຜິດ ຮົກທຶບຄື ທິດຖິ ກັນດານຄືທິດຖິ ຄວາມເຫັນທີ່ເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄື ທິດຖິ ຄວາມຍຶດຖື ຄວາມຍຶດໝັ້ນ ຄວາມຕັ້ງໝັ້ນຄວາມຍຶດຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິທີ່ເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຍຶດຖືໂດຍຄາດເຄື່ອນ ໃນສະໄໝນັ້ນ ນີ້ຊື່ວ່າ ມິດສາທິດຖິທີ່ເກີດຂຶ້ນໃນສະໄໝນັ້ນ

[໓໘໓] ອະຫິຣິກະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ກິຣິຍາທີ່ບໍ່ລະອາຍຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນລະອາຍ ກິຣິຍາທີ່ບໍ່ລະອາຍຕໍ່ການປະກອບສະພາວະທຳທີ່ເປັນອະກຸສົນເຊິ່ງເປັນບາບ ໃນສະໄໝນັ້ນ ນີ້ຊື່ວ່າ ອະຫິຣິກະທີ່ເກີດຂຶ້ນໃນສະໄໝນັ້ນ

[໑໙໔] ອະໂນດຕັບປະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ກິຣິຍາທີ່ບໍ່ຢ້ານຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນຢ້ານ ກິຣິຍາທີ່ບໍ່ຢ້ານຕໍ່ການປະກອບສະພາວະທຳທີ່ເປັນອະກຸສົນເຊິ່ງເປັນບາບ ໃນສະໄໝນັ້ນ ນີ້ຊື່ວ່າອະໂນດຕັບປະທີ່ເກີດຂຶ້ນໃນສະໄໝນັ້ນ

[໑໙໕] ສະມະຖະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ຟຸ້ງຊ່ານ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ມິດສາສະມາທິ ໃນສະໄໝນັ້ນ ນີ້ຊື່ວ່າ ສະມະຖະທີ່ເກີດຂຶ້ນໃນສະໄໝນັ້ນ

[໑໙໖] ປັກຄາຫະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ຄວາມດຸໝັ່ນຂັນແຂງ ຄວາມສູ້ຊົນ ຄວາມຂວນຂວາຍ ຄວາມພະຍາຍາມ ຄວາມອຸດສາຫະ ຄວາມທົນທານ ຄວາມເຂັ້ມແຂງ ຄວາມໝັ່ນ ຄວາມມຸ້ງໝັ້ນຢ່າງບໍ່ທໍ້ຖອຍ ຄວາມບໍ່ປະຖິ້ມສັນທະ ຄວາມບໍ່ປະຖິ້ມທຸຣະ ຄວາມເອົາໃຈ ໃສ່ທຸຣະ ວິຣິຍະ ວິຣິຍິນຊີ ວິຣິຍະພະລະ ມິດສາວາຍາມະ ໃນສະໄໝນັ້ນ ນີ້ຊື່ວ່າ ປັກຄາຫະທີ່ເກີດຂຶ້ນໃນສະໄໝນັ້ນ

[໑໙໗] ອະວິກເຂປະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຄວາມດຳຣົງຢູ່ ຄວາມຕັ້ງໝັ້ນ ຄວາມບໍ່ຊັດສ່າຍ ຄວາມບໍ່ ຟຸ້ງຊ່ານ ຄວາມທີ່ຈິດບໍ່ຊັດສ່າຍ ສະມະຖະ ສະມາທິນຊີ ສະມາທິພະລະ ມິດສາສະມາທິໃນສະໄໝນັ້ນ ນີ້ຊື່ວ່າ ອະວິກເຂປະທີ່ເກີດຂຶ້ນໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

ຂັນ ໔ ອາຍະຕະນະ ໒ ທາດ ໒ ອາຫານ ໓ ອິນຊີ ໕ ຊານນີອົງ ໕ ມັກນີອົງ ໔ ພະລະ ໔ ເຫດ ໒ ຜັດສະ ໑ ຯລຯ ທຳມາຍະຕະນະ ໑ ແລະທຳມະທາດ ໑ ໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນ ໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ ຯລຯ

[໑໙໘] ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ວິຕົກ ວິຈານ ປິຕິ ເອກັກຄະຕາ ວິຣິຍິນຊີ ສະມາທິນຊີ ມິດສາທິດຖິ ມິດສາສັງກັບປະ ມິດສາວາຍາມະ ມິດສາສະມາທິ ວິຣິຍະພະລະ ສະມາທິພະລະ ອະຫິຣິກະພະລະ ອະໂນດຕັບປະພະລະ ໂລພະ ໂມຫະ ອະພິດຊາ ມິດສາທິດຖິ ອະຫິຣິກະ ອະໂນດຕັບປະ ສະມະຖະ ປັກຄາຫະ ແລະອະວິກເຂປະ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນ ໃນສະໄໝນັ້ນ ນີ້ຊື່ວ່າ ສັງຂານຂັນທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

## ອະກຸສົນຈິດດວງທີ ໘

[໓໙໙] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດທີ່ເປັນອະກຸສົນປະກອບດ້ວຍໂສມະນັດ ສຳປະຍຸດດ້ວຍທິດຖິ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໂດຍມີເຫດດັ່ງຈູງ ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

## ອະກຸສົນຈິດດວງທີ ໙

[໔໐໐] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດທີ່ເປັນອະກຸສົນ ເກີດພ້ອມດ້ວຍໂສມະນັດ ວິບປະຍຸດຈາກທິດຖິ ມີຮູບເປັນອາລົມ ມີສຽງເປັນອາລົມ ມີກິ່ນເປັນອາລົມ ມີຣົດເປັນອາລົມ ມີໂຜດຖັບພະເປັນອາລົມມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ວິຕົກ ວິຈານ ປີຕິ ສຸກ ເອກັກຄະຕາ ວິຣິຍິນຊີ ສະມາທິນຊີ ມະນິນຊີ ໂສມະນັດສິນຊີ ຊີວິຕິນຊີ ມິດສາສັງກັບປະ ມິດສາວາຍາມະ ມິດສາສະມາທິ ວິຣິຍະພະລະ ສະມາທິພະລະ ອະຫິຣິກະພະລະ ອະໂນດຕັບປະພະລະ ໂລພະ ໂມຫະ ອະພິດຊາ ອະຫິຣິກະ ອະໂນຕັບປະ ສະມະຖະປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ ຯລຯ

ຂັນ ໔ ອາຍະຕະນະ ໒ ທາດ ໒ ອາຫານ ໓ ອິນຊີ ໕ ຊານມີອົງ ໕ ມັກມີອົງ ໓ ພະລະ ໔ ເຫດ ໒ ຜັດສະ ໑ ຯລຯ ທຳມາຍະຕະນະ ໑ ແລະທຳມະທາດ ໑ ທີ່ເກີດຂຶ້ນໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນ ໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ ຯລຯ

[໔໐໑] ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ວິຕົກ ວິຈານ ປີຕິ ເອກັກຄະຕາ ວິຣິຍິນຊີ ສະມາທິນຊີ ຊີວິຕິນຊີ ມິດສາສັງກັບປະ ມິດສາວາຍາມະ ມິດສາສະມາທິ ວິຣິຍະພະລະ ສະມາທິພະລະ ອະຫິຣິກະພະລະ ອະໂນດຕັບປະພະລະ ໂລພະ ໂມຫະ ອະພິດຊາ ອະຫິຣິກະ ອະໂນດຕັບປະ ສະມະຖະ ປັກຄາຫະ ແລະ ອະວິກເຂປະ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ນີ້ຊື່ວ່າ ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

## ອະກຸສົນຈິດດວງທີ ໕

[໔໐໔] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດທີ່ເປັນອະກຸສົນ ເກີດພ້ອມດ້ວຍໂສມະນັດ ວິບປະຍຸດຈາກທິດຖິ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໂດຍມີເຫດດັ່ງຈູງໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

## ອະກຸສົນຈິດດວງທີ ໕

[໔໐໕] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດທີ່ເປັນອະກຸສົນ ເກີດພ້ອມດ້ວຍອຸເປກຂາ ສຳປະຍຸດດ້ວຍທິດຖິ ມີຮູບເປັນອາລົມ ມີສຽງເປັນອາລົມ ມີກິ່ນເປັນອາລົມ ມີຣົດເປັນອາລົມ ມີໂຜດຖັບພະເປັນອາລົມມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ວິຕົກ ວິຈານ ອຸເປກຂາ ເອກັກຄະຕາ ວິຣິຍິນຊີ ສະມາທິນຊີ ມະນິນຊີ ອຸເປກຂິນຊີ ຊີວິຕິນຊີ ມິດສາທິດຖິ ມິດສາສັງກັບປະ ມິດສາວາຍາມະ ມິດສາສະມາທິ ວິຣິຍະພະລະ ສະມາທິພະລະ ອະຫິຣິກະພະລະ ອະໂນດຕັບປະພະລະ ໂລພະ ໂມຫະ ອະພິດຊາ ມິດສາທິດຖິ ອະຫິຣິກະ ອະໂນດຕັບປະ ສະມະຖະ ປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ ຊື່ວ່າເປັນອະກຸສົນ

[໔໐໔] ຜັດສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງທີ່ເກີດຂຶ້ນໃນສະໄໝນັ້ນ ນີ້ຊື່ວ່າ ຜັດສະທີ່ເກີດຂຶ້ນໃນສະໄໝນັ້ນ

[໔໐໕] ເວທະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສຳຣານທາງໃຈກໍບໍ່ແມ່ນ ອັນເກີດແຕ່ສຳຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ເວທະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໐໖] ອຸເປກຂາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສຳຣານທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ອຸເປກຂາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໐໗] ອຸເປກຂິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສຳຣານທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມ ທີ່ບໍ່ທຸກ ບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດໃນສະໄໝນັ້ນ ນີ້ຊື່ວ່າ ອຸເປກຂິນຊີທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ ຊື່ວ່າ ເປັນອະກຸສົນ

ຂັນ ໔ ອາຍະຕະນະ ໒ ທາດ ໒ ອາຫານ ໓ ອິນຊີ ໕ ຊານມີອົງ ໔ ມັກມີອົງ ໔ ພະລະ ໔ ເຫດ ໒ ຜັດສະ ໑ ຯລຯ ທຳມາຍະຕະນະ ໑ ແລະທຳມະທາດ ໑ ໃນ ສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອິງອາໄສເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ ຯລຯ

[໔໐໘] ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ວິຕົກ ວິຈານ ເອກັກຄະຕາ ວິຣິຍິນຊີ ສະມາທິນຊີ ຊີວິຕິນຊີ ມິດສາທິດຖິ ມິດສາສັງກັບປະ ມິດສາວາຍາມະ ມິດສາສະມາທິ ວິຣິຍະພະລະ ສະມາທິພະລະ ອະຫິຣິກະພະລະ ອະໂນດຕັບປະພະລະ ໂລພະ ໂມຫະ ອະພິດຊາ ມິດສາທິດຖິ ອະຫິຣິກະ ອະໂນດຕັບປະ ສະມະຖະ ປັກຄາຫະ ແລະອະວິກເຂປະ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນທີ່ເກີດຂຶ້ນ ໃນສະໄໝນັ້ນ ນີ້ຊື່ວ່າ ສັງຂານຂັນທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

## ອະກຸສົນຈິດດວງທີ ໓

[໔໐໙] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດທີ່ເປັນອະກຸສົນ ເກີດພ້ອມດ້ວຍອຸເປກຂາ ສຳປະຍຸດດ້ວຍທິດຖິ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໂດຍມີເຫດດຶງຈູງໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

## ອະກຸສົນຈິດດວງທີ ໗

[໔໑໐] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດທີ່ເປັນອະກຸສົນ ເກີດພ້ອມດ້ວຍອຸເປກຂາ ວິບປະຍຸດຈາກທິດຖິ ມີຮູບເປັນອາລົມ ມີສຽງເປັນອາລົມ ມີກິ່ນເປັນອາລົມ ມີຣົດເປັນອາລົມ ມີໂຜດຖັບພະເປັນອາລົມມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ວິຕົກ ວິຈານ ອຸເປກຂາ ເອກັກຄະຕາ ວິຣິຍິນຊີ ສະມາທິນຊີ ມະນິນຊີ ອຸເປກຂິນຊີ ຊີວິຕິນຊີ ມິດສາສັງກັບປະ ມິດສາວາຍາມະ ມິດສາສະມາທິ ວິຣິຍະພະລະ ສະມາທິພະລະ ອະຫິຣິກະພະລະ ອະໂນດຕັບປະພະລະ ໂລພະ ໂມຫະ ອະພິດຊາ ອະຫິຣິກະອະໂນດຕັບປະ ສະ

ມະຖະ ປັກຄາຫະ ແລະອະວິກເຂປະ ກໍເກີດຂຶ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ ຯລຯ

ຂັນ ໔ ອາຍະຕະນະ ໒ ທາດ ໒ ອາຫານ ໓ ອິນຊີ ໕ ຊານມີອົງ ໔ ມັກມີອົງ ໓ ພະລະ ໔ ເຫດ ໒ ຜັດສະ ໑ ຯລຯ ທຳມາຍະຕະນະ ໑ ແລະທຳມະທາດ ໑ ໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ ຯລຯ

[໔໑໑] ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ວິຕົກ ວິຈານ ເອກັກຄະຕາ ວິຣິຍິນຊີ ສະມາທິນຊີ ຊີວິຕິນຊີ ມິດສາສັງກັບປະ ມິດສາວາຍາມະ ມິດສາສະມາທິ ວິຣິຍະພະລະ ສະມາທິພະລະອະຫິຣິກະພະລະ ອະໂນດຕັບປະພະລະ ໂລພະ ໂມຫະ ອະພິດຊາ ອະຫິຣິກະ ອະໂນດຕັບປະ ສະມະຖະ ປັກຄາຫະ ແລະ ອະວິກເຂປະ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນ ນີ້ຊື່ວ່າສັງຂານຂັນທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ ຯລຯ

## ອະກຸສົນຈິດດວງທີ ๘

[໔໑໒] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດທີ່ເປັນອະກຸສົນ ເກີດພ້ອມດ້ວຍອຸເປກຂາ ວິບປະຍຸດຈາກທິດຖິ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນ ໂດຍມີເຫດດຶງຈູງໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ ຯລຯ

## ອະກຸສົນຈິດດວງທີ ໙

[໔໑໓] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດທີ່ເປັນອະກຸສົນ ເກີດພ້ອມດ້ວຍໂທມະນັດ ສຳປະຍຸດດ້ວຍປະຕິຄະ ມີຮູບເປັນອາລົມ ມີສຽງເປັນອາລົມ ມີກິ່ນເປັນອາລົມ ມີຣົດເປັນອາລົມ ມີໂຜດຖັບພະເປັນອາລົມ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ວິຕົກ ວິຈານ ທຸກ ເອກັກຄະຕາ ວິຣິຍິນຊີ ສະມາທິນຊີ ມະນິນຊີ ໂທມະນັດສິນຊີ ຊີວິຕິນຊີ ມິດສາສັງກັບປະ ມິດສາວາຍາມະ ມິດສາສະມາທິ ວິຣິຍະພະລະ ສະມາທິພະລະ ອະຫິຣິກະພະລະ ອະໂນດຕັບປະພະລະ ໂທສະ ໂມຫະ ພະຍາບາດ ອະຫິຣິກະ ອະໂນດຕັບປະ ສະມະຖະ ປັກຄາ

ທະ ແລະອະວິກເຂປະ ກໍເກີດຂຶ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນ ໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

[໔໑໔] ຜັດສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງ ໃນສະໄໝນັ້ນ ນີ້ຊື່ວ່າ ຜັດສະທີ່ເກີດຂຶ້ນໃນສະໄໝນັ້ນ

[໔໑໕] ເວທະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມບໍ່ສຳຣານທາງໃຈ ຄວາມທຸກທາງໃຈ ອັນເກີດແຕ່ສຳຜັດແຫ່ງມະໂນວິນຍານທາດ ທີ່ເໝາະສົມກັນ ຄວາມສະເຫວີຍອາລົມທີ່ບໍ່ສຳຣານເປັນທຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາ ສະເຫວີຍອາລົມທີ່ບໍ່ສຳຣານເປັນທຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ເວທະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ฯลฯ

[໔໑໖] ທຸກ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມບໍ່ສຳຣານທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສຳຣານເປັນທຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ສຳຣານເປັນທຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ທຸກທີ່ເກີດຂຶ້ນໃນສະໄໝນັ້ນ

[໔໑໗] ໂທມະນັດສິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມບໍ່ສຳຣານທາງໃຈ ຄວາມທຸກທາງໃຈ ຄວາມສະເຫວີຍອາລົມທີ່ບໍ່ສຳຣານເປັນທຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍະສະເຫວີຍອາລົມທີ່ບໍ່ສຳຣານເປັນທຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ໂທມະນັດສິນຊີທີ່ເກີດຂຶ້ນໃນສະໄໝນັ້ນ ฯลฯ

[໔໑໘] ໂທສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມ ຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ຄວາມພິໂຣດ ຄວາມພິໂຣດຕອບ ຄວາມດຸຮ້າຍ ຄວາມ ຮຸນແຮງ ຄວາມທີ່ຈິດບໍ່ແຊ່ມຊື່ນ ໃນສະໄໝນັ້ນ ນີ້ຊື່ວ່າ ໂທສະທີ່ເກີດຂຶ້ນໃນສະໄໝນັ້ນ ฯลฯ

[໔໑໙] ພະຍາບາດ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມ ຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ຄວາມພິໂຣດ ຄວາມພິໂຣດຕອບ ຄວາມດຸຮ້າຍ ຄວາມຮຸນ ແຮງ ຄວາມທີ່ຈິດບໍ່ແຊ່ມຊື່ນ ໃນສະໄໝນັ້ນ ນີ້ຊື່ວ່າ ພະຍາບາດທີ່ເກີດຂຶ້ນໃນສະໄໝນັ້ນ ฯลฯ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່າ ນີ້ຊື່ວ່າ ເປັນອະກຸສົນ

ຂັນ ໔ ອາຍະຕະນະ ໔ ທາດ ໔ ອາຫານ ໓ ອິນຊີ ໕ ຊານນິອົງ ໔ ມັກນິອົງ ໓ ພະລະ ໔ ເຫດ ໔ ຜັດສະ ໑ ຯລຯ ທຳມາຍະຕະນະ ໑ ແລະທຳມະທາດ ໑ ໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ ຊື່ວ່າເປັນອະກຸສົນ ຯລຯ

[໔໔໐] ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ວິຕົກ ເອກັກຄະຕາ ວິຣິຍິນຊີ ສະມາທິນຊີ ຊີວິຕິນຊີມິດສາສັງກັບປະ ມິດສາວາຍາມະ ມິດສາສະມາທິ ວິຣິຍະພະລະ ສະມາທິພະລະ ອະຫິຣິກະພະລະ ອະໂນດຕັບປະພະລະ ໂທສະ ໂມຫະ ພະຍາບາດ ອະຫິຣິກະ ອະໂນດຕັບປະ ສະມະຖະ ປັກຄາຫະ ແລະ ອະວິກເຂປະ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນ ນີ້ຊື່ວ່າ ສັງຂານຂັນທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າເປັນອະກຸສົນ ຯລຯ

## ອະກຸສົນຈິດດວງທີ ໑໐

[໔໔໑] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດທີ່ເປັນອະກຸສົນ ເກີດພ້ອມດ້ວຍໂທມະນັດ ສຳປະຍຸດດ້ວຍປະຕິຄະ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໂດຍມີເຫດດຶງຈູງໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ ຯລຯ

## ອະກຸສົນຈິດດວງທີ ໑໑

[໔໔໔] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດທີ່ເປັນອະກຸສົນປະກອບດ້ວຍອຸເປກຂາ ສຳປະຍຸດດ້ວຍວິຈິກິດສາ ມີຮູບເປັນອາລົມ ມີສຽງເປັນອາລົມ ມີກິ່ນເປັນອາລົມ ມີຣົດເປັນອາລົມ ມີໂຜດຖັບພະເປັນອາລົມ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ວິຕົກ ວິຈານ ອຸເປກຂາ ເອກັກຄະຕາ ວິຣິຍິນຊີ ມະນິນຊີ ອຸເປກຂິນຊີ ຊີວິຕິນຊີ ມິດສາສັງກັບປະ ມິດສາວາຍາມະ ວິຣິຍະພະລະ ອະຫິຣິກະພະລະ ອະໂນດຕັບປະພະລະ ວິຈິກິດສາ ໂມຫະ ອະຫິຣິກະ ອະໂນດຕັບປະ ແລະປັກຄາຫະ ກໍເກີດຂຶ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ ຊື່ວ່າ ເປັນອະກຸສົນ

[໔໔໓] ຜັດສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງ ທີ່ເກີດຂຶ້ນໃນສະໄໝນັ້ນ ນີ້ຊື່ວ່າ ຜັດສະທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ

[໔໘໔] ເອກັກຄະຕາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ໃນສະໄໝນັ້ນ ນີ້ຊື່ວ່າ ເອກັກຄະຕາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໘໕] ວິຈິກິດສາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມເຄືອບແຄງ ກິຣິຍາທີ່ເຄືອບແຄງ ພາວະທີ່ເຄືອບແຄງ ຄວາມຄິດເຫັນໄປຕ່າງ ໆ ຄວາມຕັດສິນອາລົມບໍ່ໄດ້ ຄວາມເຫັນເປັນສອງຢ່າງ ຄວາມເຫັນເໝືອນທາງສອງແຍກ ຄວາມສົງໄສ ຄວາມບໍ່ສາມາດຖືເອົາໂດຍສ່ວນດຽວໄດ້ ຄວາມຄິດສ່າຍໄປ ຄວາມຄິດມົ່ວໄປ ຄວາມບໍ່ສາມາດຢັ່ງລົງຖືເອົາເປັນຍຸດຕິໄດ້ ຄວາມກະດ້າງແຫ່ງຈິດ ຄວາມລັງເລໃນສະໄໝນັ້ນ ນີ້ຊື່ວ່າ ວິຈິກິດສາ ທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

ຂັນ ໔ ອາຍະຕະນະ ໒ ທາດ ໒ ອາຫານ ໓ ອິນຊີ ໔ ຊານມີອົງ ໔ ມັກມີອົງ ໒ ພະລະ ໓ ເຫດ ໑ ຜັດສະ ໑ ຯລຯ ທຳມາຍະຕະນະ ໑ ແລະທຳມະທາດ ໑ ໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ ຯລຯ

[໔໘໖] ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ວິຕົກ ວິຈານ ເອກັກຄະຕາ ວິຣິຍິນຊີ ຊີວິຕິນຊີ ມິດສາສັງກັບປະ ມິດສາວາຍາມະ ວິຣິຍະພະລະ ອະຫິຣິກະພະລະ ອະໂນດຕັບປະພະລະ ວິຈິກິດສາ ໂມຫະ ອະຫິຣິກະ ອະໂນດຕັບປະ ແລະປັກຄາຫະ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນ ນີ້ຊື່ວ່າ ສັງຂານຂັນທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

## ອະກຸສົນຈິດດວງທີ ໑໒

[໔໘໗] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດທີ່ເປັນອະກຸສົນ ເກີດພ້ອມດ້ວຍອຸເປກຂາ ສຳປະຍຸດດ້ວຍອຸດທັດຈະ ມີຮູບເປັນອາລົມ ມີສຽງເປັນອາລົມ ມີກິ່ນເປັນອາລົມ ມີຣົດເປັນອາລົມ ມີໂຜດຖັບພະເປັນອາລົມ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ວິຕົກ ວິຈານ ອຸເປກຂາ ເອກັກຄະຕາ ວິຣິຍິນຊີ ສະມາທິນຊີ ມະນິນຊີ ອຸເປກຂິນຊີ ຊີວິຕິນຊີ ມິດສາສັງກັບປະ ມິດສາວາຍາມະ ມິດສາສະມາທິ ວິຣິຍະພະລະ ສະມາທິພະລະ ອະຫິ

ຣິກະພະລະ ອະໂນດຕັບປະພະລະ ອຸດທັດຈະ ໂມຫະ ອະຫິຣິກະ ອະໂນດຕັບປະ ສະມະຖະປັກຄາຫະ ແລະອະວິກເຂປະ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

[໔໘໗] ຜັດສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງ ທີ່ເກີດຂຶ້ນໃນສະໄໝນັ້ນ ນີ້ຊື່ວ່າ ຜັດສະທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ

[໔໘໘] ອຸດທັດຈະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຟຸ້ງຊ່ານແຫ່ງຈິດ ຄວາມບໍ່ສະງົບ ຄວາມວຸ້ນວາຍໃຈ ຄວາມພ່ານແຫ່ງຈິດໃນສະໄໝນັ້ນ ນີ້ຊື່ວ່າ ອຸດທັດຈະທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

ຂັນ ໔ ອາຍະຕະນະ ໒ ທາດ ໒ ອາຫານ ໓ ອິນຊີ ໕ ຊານນີອົງ ໔ ມັກນີອົງ ໓ ພະລະ ໔ ເຫດ ໑ ຜັດສະ ໑ ຯລຯ ທຳມາຍະຕະນະ ໑ ແລະທຳມະທາດ ໑ ໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ ຯລຯ

[໔໙໐] ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ວິຕົກ ວິຈານ ເອກັກຄະຕາ ວິຣິຍິນຊີ ສະມາທິນຊີ ຊີວິຕິນຊີ ມິດສາສັງກັບປະ ມິດສາວາຍາມະ ມິດສາສະມາທິ ວິຣິຍະພະລະ ສະມາທິພະລະອະຫິຣິກະພະລະ ອະໂນດຕັບປະພະລະ ອຸດທັດຈະ ໂມຫະ ອະຫິຣິກະ ອະໂນດຕັບປະ ສະມະຖະປັກຄາຫະ ແລະອະວິກເຂປະ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອີງອາໄສເກີດຂຶ້ນແມ່ນອື່ນ ໃນສະໄໝນັ້ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນ ນີ້ຊື່ວ່າ ສັງຂານຂັນທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

**ອະກຸສົນຈິດ ໑໒ ຈົບ**

# ອັບພະຍາກະຕະບົດ

## ກາມາວະຈະຣະວິປາກະຈິດ

## ປັນຈະວິນຍານທີ່ເປັນກຸສົນວິບາກ

[໔໓໑] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ຈັກຂຸວິນຍານທີ່ເປັນວິບາກ ເກີດພ້ອມດ້ວຍອຸເປກຂາ ມີຮູບເປັນອາລົມ ເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳໄວ້ແລ້ວໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ອຸເປກຂາ ເອກັກຄະຕາ ມະນິນຊີ ອຸເປກຂິນຊີ ແລະຊີວິຕິນຊີ ກໍເກີດຂຶ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

[໔໓໒] ຜັດສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງທີ່ເກີດຂຶ້ນໃນສະໄໝນັ້ນ ນີ້ຊື່ວ່າ ຜັດສະທີ່ເກີດຂຶ້ນໃນສະໄໝນັ້ນ

[໔໓໓] ເວທະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສຳຣານທາງໃຈກໍບໍ່ແມ່ນ ອັນເກີດແຕ່ສຳຜັດແຫ່ງຈັກຂຸວິນຍານທາດທີ່ເໝາະສົມກັນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ເວທະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໓໔] ສັນຍາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ ອັນເກີດແຕ່ສຳຜັດແຫ່ງຈັກຂຸວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ສັນຍາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໓໕] ເຈຕະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ອັນເກີດແຕ່ສຳຜັດແຫ່ງຈັກຂຸວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ເຈຕະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໓໖] ຈິດ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າຈິດທີ່ເກີດຂື້ນ ໃນສະໄໝນັ້ນ

[໔໓໗] ອຸເປກຂາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສຳຣານທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ອຸເປກຂາທີ່ເກີດຂື້ນໃນສະໄໝນັ້ນ

[໔໓໘] ເອກັກຄະຕາ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ໃນສະໄໝນັ້ນ ນີ້ຊື່ວ່າເອກັກຄະຕາທີ່ເກີດຂື້ນໃນສະໄໝນັ້ນ

[໔໓໙] ມະນິນຊີ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າມະນິນຊີ ທີ່ເກີດຂື້ນໃນສະໄໝນັ້ນ

[໔໔໐] ອຸເປກຂິນຊີ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສຳຣານທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກອັນເກີດແຕ່ ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ອຸເປກຂິນຊີທີ່ເກີດຂື້ນໃນສະໄໝນັ້ນ

[໔໔໑] ຊີວິຕິນຊີ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ອາຍຸ ຄວາມດຳຣົງຢູ່ ຄວາມເປັນໄປ ກິຣິຍາທີ່ເປັນໄປ ອາການສືບເນື່ອງກັນ ຄວາມດຳເນີນໄປ ຄວາມຫຼໍ່ລ້ຽງ ຊີວິດ ຊີວິຕິນຊີ ແຫ່ງສະພາວະທຳທີ່ບໍ່ເປັນຮູບເຫຼົ່ານັ້ນໃນສະໄໝນັ້ນ ນີ້ຊື່ວ່າ ຊີວິຕິນຊີທີ່ເກີດຂື້ນໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງ ອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

ຂັນ ໔ ອາຍະຕະນະ ໒ ທາດ ໒ ອາຫານ ໓ ອິນຊີ ໓ ຜັດສະ ໑ ໗ລ໗ ຈັກຂຸວິນຍານທາດ ໑ ທຳມາຍະຕະນະ ໑ ແລະທຳມະທາດ ໑ ໃນສະໄໝນັ້ນ ຫຼື ສະພາວະທຳ ທີ່ບໍ່ເປັນຮູບເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ ໗ລ໗

[໔໔໒] ສັງຂານຂັນ ທີ່ເກີດຂື້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ເອກັກຄະຕາ ແລະຊີວິຕິນຊີ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນ ນີ້ຊື່ວ່າ ສັງຂານຂັນທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

[໔໔໓] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ໂສຕະວິນຍານທີ່ເປັນວິບາກ ເກີດພ້ອມດ້ວຍອຸເປກຂາ ມີສຽງເປັນອາລົມເກີດຂຶ້ນ ຯລຯ ຄານະວິນຍານທີ່ເປັນວິບາກ ເກີດພ້ອມດ້ວຍອຸເປກຂາ ມີກິ່ນເປັນອາລົມເກີດຂຶ້ນ ຯລຯ ຊິວຫາວິນຍານທີ່ເປັນວິບາກ ເກີດພ້ອມດ້ວຍອຸເປກຂາມີຣົດເປັນອາລົມເກີດຂຶ້ນ ຯລຯ ກາຍວິນຍານທີ່ເປັນວິບາກ ເກີດພ້ອມດ້ວຍສຸກຂະເວທະນາ ມີໂຜດຖັບພະເປັນອາລົມເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ສຸກ ເອກັກຄະຕາ ມະນິນຊີ ສຸຂິນຊີ ແລະຊີວິຕິນຊີ ກໍເກີດຂຶ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

[໔໔໔] ຜັດສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ການກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງທີ່ເກີດຂຶ້ນໃນສະໄໝນັ້ນ ນີ້ຊື່ວ່າຜັດສະທີ່ເກີດຂຶ້ນໃນສະໄໝນັ້ນ

[໔໔໕] ເວທະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງກາຍ ຄວາມສຸກທາງກາຍ ອັນເກີດແຕ່ສຳຜັດແຫ່ງກາຍວິນຍານທາດທີ່ເໝາະສົມກັນ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ກາຍສຳຜັດກິຣິຍາທີ່ສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດຈາກກາຍສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າເວທະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໔໖] ສັນຍາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ ອັນເກີດແຕ່ສຳຜັດແຫ່ງກາຍວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ສັນຍາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໔໗] ເຈຕະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ອັນເກີດແຕ່ສຳຜັດແຫ່ງກາຍວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ເຈຕະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໔໘] ຈິດ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ຈິດທີ່ເກີດຂຶ້ນໃນສະໄໝນັ້ນ

[໔໔໙] ສຸກ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງກາຍ ຄວາມສຸກທາງກາຍ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ກາຍສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ກາຍສຳຜັດໃນສະໄໝນັ້ນ ນີ້ຊື່ວ່າ ສຸກທີ່ເກີດຂຶ້ນໃນສະໄໝນັ້ນ

[໔໕໐] ເອກັກຄະຕາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ໃນສະໄໝນັ້ນ ນີ້ຊື່ວ່າເອກັກຄະຕາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໕໑] ມະນິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າມະນິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ

[໔໕໒] ສຸຂິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງກາຍ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ ກາຍສຳຜັດ ກິຣິຍາທີ່ສະເຫວີຍທີ່ສຳຣານເປັນສຸກ ອັນເກີດແຕ່ກາຍສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ສຸຂິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ

[໔໕໓] ຊີວິຕິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ອາຍຸ ຄວາມດຳຣົງຢູ່ ຄວາມເປັນໄປ ກິຣິຍາທີ່ເປັນໄປ ອາການທີ່ສືບເນື່ອງກັນ ຄວາມດຳເນີນໄປ ຄວາມຫຼໍ່ລ້ຽງ ຊີວິດ ຊີວິຕິນຊີ ແຫ່ງສະພາວະທຳທີ່ບໍ່ເປັນຮູບເຫຼົ່ານັ້ນໃນສະໄໝນັ້ນ ນີ້ຊື່ວ່າ ຊີວິຕິນຊີທີ່ເກີດຂຶ້ນໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

ຂັນ ໔ ອາຍະຕະນະ ໒ ທາດ ໒ ອາຫານ ໓ ອິນຊີ ໓ ຜັດສະ ໑ ຯລຯ ກາຍວິນຍານທາດ ໑ ທຳມາຍະຕະນະ ໑ ແລະທຳມະທາດ ໑ ໃນສະໄໝນັ້ນ ຫຼື ສະພາວະທຳ ທີ່ບໍ່ເປັນຮູບ ເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ ຯລຯ

[໔໕໔] ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ເອກັກຄະຕາ ແລະຊີວິຕິນຊີ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງ ອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນ ນີ້ຊື່ວ່າສັງຂານຂັນທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

**ປັນຈະວິນຍານທີ່ເປັນກຸສົນວິບາກ ຈົບ**

## ມະໂນທາດທີ່ເປັນກຸສົນວິບາກ

[໔໕໕] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນທາດທີ່ເປັນວິບາກ ເກີດພ້ອມດ້ວຍອຸເປກຂາ ມີຮູບເປັນອາລົມ ຯລຯ ມີໂຜດຖັບພະເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ວິຕົກ ວິຈານ ອຸເປກຂາ ເອກັກຄະຕາ ມະນິນຊີ ອຸເປກຂິນຊີ ແລະຊີວິຕິນຊີ ກໍເກີດຂຶ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

[໔໕໖] ຜັດສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ການກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງທີ່ເກີດຂຶ້ນໃນສະໄໝນັ້ນ ນີ້ຊື່ວ່າ ຜັດສະທີ່ເກີດຂຶ້ນໃນສະໄໝນັ້ນ

[໔໕໗] ເວທະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສຳຣານທາງໃຈກໍບໍ່ແມ່ນ ອັນເກີດແຕ່ສຳຜັດແຫ່ງຈັກຂຸວິນຍານທາດທີ່ເໝາະສົມກັນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ເວທະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໕໘] ສັນຍາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ ອັນເກີດແຕ່ສຳຜັດແຫ່ງມະໂນທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ສັນຍາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໕໙] ເຈຕະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ອັນເກີດແຕ່ສຳຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ເຈຕະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໖໐] ຈິດ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ຈິດທີ່ເກີດຂຶ້ນໃນສະໄໝນັ້ນ

[໔໖໑] ວິຕົກ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມນຶກ ຄວາມນຶກໂດຍອາການຕ່າງ ໆ ຄວາມດຳຣິ ຄວາມທີ່ຈິດແນບແໜ້ນໃນອາລົມ ຄວາມທີ່ຈິດແນບສະນິດໃນອາລົມ ຄວາມຍົກຈິດຂຶ້ນສູ່ອາລົມ ໃນສະໄໝນັ້ນ ນີ້ຊື່ວ່າ ວິຕົກທີ່ເກີດຂຶ້ນໃນສະໄໝນັ້ນ

[໔໖໔] ວິຈານ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕອງ ຄວາມພິຈາລະນາ ຄວາມຕາມພິຈາລະນາ ຄວາມເຂົ້າໄປພິຈາລະນາ ຄວາມທີ່ຈິດສືບຕໍ່ອາລົມ ຄວາມທີ່ຈິດເພ່ງອາລົມ ໃນສະໄໝນັ້ນ ນີ້ຊື່ວ່າ ວິຈານທີ່ເກີດຂຶ້ນໃນ ສະໄໝນັ້ນ

[໔໖໖] ອຸເປກຂາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສຳຣານທາງໃຈກໍບໍ່ແມ່ນ ຄວາມສະ ເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກ ບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ອຸເປກຂາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໖໘] ເອກັກຄະຕາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ໃນສະໄໝນັ້ນ ນີ້ຊື່ວ່າ ເອກັກຄະຕາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໖໕] ມະນິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ມະນິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ

[໔໖໖] ອຸເປກຂິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສຳຣານທາງໃຈກໍບໍ່ແມ່ນ ຄວາມສະ ເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ອຸເປກຂິນຊີທີ່ເກີດຂຶ້ນໃນສະໄໝນັ້ນ

[໔໖໗] ຊີວິຕິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ອາຍຸ ຄວາມດຳຣົງຢູ່ ຄວາມເປັນໄປ ກິຣິຍາທີ່ໃຫ້ເປັນໄປ ອາການທີ່ສືບເນື່ອງກັນ ຄວາມດຳເນີນໄປ ຄວາມຫຼໍ່ລ້ຽງ ຊີວິດ ຊີວິຕິນຊີ ແຫ່ງສະພາວະທຳທີ່ບໍ່ເປັນຮູບເຫຼົ່ານັ້ນໃນ ສະໄໝນັ້ນ

ນີ້ຊື່ວ່າ ຊີວິຕິນຊີທີ່ເກີດຂຶ້ນໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງ ອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

ຂັນ ໔ ອາຍະຕະນະ ໔ ທາດ ໔ ອາຫານ ໓ ອິນຊີ ໓ ຜັດສະ ໑ ຯລຯ ມະໂນທາດ ໑ ທຳມາຍະຕະນະ ໑ ແລະທຳມະທາດ ໑ ໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງ ອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ ຯລຯ

[໔໖໗] ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ວິຕົກ ວິຈານ ເອກັກຄະຕາ ແລະຊີວິຕິນຊີ ຫຼື ສະພາວະທຳທີ່ ບໍ່ເປັນຮູບ ເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນ ນີ້ຊື່ວ່າ ສັງຂານຂັນທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

**ມະໂນທາດທີ່ເປັນກຸສົນວິບາກ ຈົບ**

## ມະໂນວິນຍານທາດທີ່ເປັນກຸສົນວິບາກ

## ປະກອບດ້ວຍໂສມະນັດ

[໔໖໘] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນວິນຍານທາດທີ່ເປັນກຸສົນວິບາກ ເກີດພ້ອມດ້ວຍໂສມະນັດ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ວິຕົກ ວິຈານ ປິຕິ ສຸກ ເອກັກຄະຕາ ມະນິນຊີ ໂສມະນັດສິນຊີ ແລະຊີວິຕິນຊີ ກໍເກີດຂຶ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອີງອາໄສກັນເກີດຂຶ້ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

[໔໗໐] ຜັດສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງ ທີ່ເກີດຂຶ້ນໃນສະໄໝນັ້ນ ນີ້ຊື່ວ່າ ຜັດສະທີ່ເກີດຂຶ້ນໃນສະໄໝນັ້ນ

[໔໗໑] ເວທະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ອັນເກີດແຕ່ສຳຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ເຈໂຕສຳຜັດກິຣິຍາສະເຫວີຍ

ອາລົມທີ່ສໍາຣານເປັນສຸກ ອັນເກີດແຕ່ເຈໂຕສໍາຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ເວທະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໗໔] ສັນຍາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈໍາໄດ້ ກິຣິຍາທີ່ຈໍາໄດ້ ພາວະທີ່ຈໍາໄດ້ ອັນເກີດແຕ່ສໍາຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ສັນຍາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໗໖] ເຈຕະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ອັນເກີດແຕ່ສໍາຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ເຈຕະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໗໔] ຈິດ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ຈິດທີ່ເກີດຂຶ້ນ ໃນສະໄໝນັ້ນ

[໔໗໕] ວິຕົກ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມນຶກ ຄວາມນຶກໂດຍອາການຕ່າງ ໆ ຄວາມດໍາຣິ ຄວາມທີ່ຈິດແນບແໜ້ນ ໃນອາລົມ ຄວາມທີ່ຈິດແນບສະນິດໃນອາລົມ ຄວາມຍົກຈິດຂຶ້ນສູ່ອາລົມ ໃນສະໄໝນັ້ນ ນີ້ຊື່ວ່າວິຕົກທີ່ເກີດຂຶ້ນໃນສະໄໝນັ້ນ

[໔໗໖] ວິຈານ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕອງ ຄວາມພິຈາລະນາ ຄວາມຕາມພິຈາລະນາ ຄວາມເຂົ້າໄປພິຈາລະນາ ຄວາມທີ່ຈິດສືບຕໍ່ອາລົມ ຄວາມທີ່ຈິດເພ່ງອາລົມ ໃນສະໄໝນັ້ນ ນີ້ຊື່ວ່າ ວິຈານທີ່ເກີດຂຶ້ນ ໃນສະໄໝນັ້ນ

[໔໗໗] ປີຕິ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມອີ່ມເອີບ ຄວາມປາໂມດ ຄວາມຍິນດີຢ່າງຍິ່ງ ຄວາມບັນເທີງ ຄວາມຣ່າເຣີງ ຄວາມຣື່ນເຣີງ ຄວາມພໍໃຈ ຄວາມຕື່ນເຕັ້ນ ຄວາມທີ່ຈິດຊື່ນຊົມຍິນດີ ໃນສະໄໝນັ້ນ ນີ້ຊື່ວ່າ ປີຕິທີ່ເກີດຂຶ້ນໃນສະໄໝນັ້ນ

[໔໗໘] ສຸກ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສໍາຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສໍາຣານເປັນສຸກ ອັນເກີດແຕ່ເຈໂຕສໍາຜັດ ກິຣິຍາສະເຫວີຍອາລົມທີ່ສໍາຣານເປັນສຸກ ອັນເກີດແຕ່ເຈໂຕສໍາຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ສຸກທີ່ເກີດຂຶ້ນໃນສະໄໝນັ້ນ

[໔໗໙] ເອກັກຄະຕາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ໃນສະໄໝນັ້ນ ນີ້ຊື່ວ່າ ເອກັກຄະຕາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໘໐] ມະນິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ມະນິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ

[໔໘໑] ໂສມະນັດສິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈ ຄວາມສຸກທາງໃຈ ຄວາມສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ສຳຣານເປັນສຸກ ອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ໂສມະນັດສິນຊີທີ່ເກີດຂຶ້ນໃນສະໄໝນັ້ນ

[໔໘໔] ຊີວິຕິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ອາຍຸ ຄວາມດຳຣົງຢູ່ ຄວາມເປັນໄປ ກິຣິຍາທີ່ໃຫ້ເປັນໄປ ອາການທີ່ສືບເນື່ອງກັນ ຄວາມດຳເນີນໄປ ຄວາມຫຼໍ່ລ້ຽງ ຊີວິດ ຊີວິຕິນຊີ ແຫ່ງສະພາວະທຳທີ່ບໍ່ເປັນຮູບເຫຼົ່ານັ້ນ ໃນສະໄໝນັ້ນ ນີ້ຮຽກວ່າ ຊີວິຕິນຊີທີ່ເກີດຂຶ້ນໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

ຂັນ ໔ ອາຍະຕະນະ ໒ ທາດ ໒ ອາຫານ ໖ ອິນຊີ ໖ ຜັດສະ ໑ ຯລຯ ມະໂນວິນຍານທາດ ໑ ທຳມາຍະຕະນະ ໑ ແລະທຳມະທາດ ໑ ໃນສະໄໝນັ້ນ ຫຼື ສະພາວະທຳ ທີ່ບໍ່ເປັນຮູບເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນອັບພະຍາກະຕະ ຯລຯ

[໔໘໖] ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ວິຕົກ ວິຈານ ປິຕິ ເອກັກຄະຕາ ແລະຊີວິຕິນຊີ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອິງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນ ນີ້ຊື່ວ່າ ສັງຂານຂັນທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

**ມະໂນວິນຍານທາດທີ່ເປັນກຸສົນວິບາກປະກອບດ້ວຍໂສມະນັດ ຈົບ**

# ມະໂນວິນຍານທາດທີ່ເປັນກຸສົນວິບາກ

# ເກີດພ້ອມດ້ວຍອຸເປກຂາ

[໔໗໔] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ມະໂນວິນຍານທາດທີ່ເປັນກຸສົນວິບາກ ເກີດພ້ອມດ້ວຍອຸເປກຂາ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດຂຶ້ນ ຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳໄວ້ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ເວທະນາ ສັນຍາ ເຈຕະນາ ຈິດ ວິຕົກ ວິຈານ ອຸເປກຂາ ເອກັກຄະຕາ ມະນິນຊີ ອຸເປກຂິນຊີ ແລະຊີວິຕິນຊີ ກໍເກີດຂຶ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

[໔໗໕] ຜັດສະ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມກະທົບ ກິຣິຍາທີ່ກະທົບ ກິຣິຍາທີ່ຖືກຕ້ອງ ພາວະທີ່ຖືກຕ້ອງ ທີ່ເກີດຂຶ້ນໃນສະໄໝນັ້ນ ນີ້ຊື່ວ່າ ຜັດສະທີ່ເກີດຂຶ້ນໃນສະໄໝນັ້ນ

[໔໗໖] ເວທະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສຳຣານທາງໃຈກໍບໍ່ແມ່ນ ອັນເກີດແຕ່ສຳຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດທີ່ເກີດຂຶ້ນໃນສະໄໝນັ້ນ ນີ້ຊື່ວ່າ ເວທະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໗໗] ສັນຍາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈຳໄດ້ ກິຣິຍາທີ່ຈຳໄດ້ ພາວະທີ່ຈຳໄດ້ ອັນເກີດແຕ່ສຳຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ສັນຍາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໗໘] ເຈຕະນາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຈົງໃຈ ກິຣິຍາທີ່ຈົງໃຈ ພາວະທີ່ຈົງໃຈ ອັນເກີດແຕ່ສຳຜັດແຫ່ງມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ເຈຕະນາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໗໙] ຈິດ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ຈິດທີ່ເກີດຂຶ້ນ ໃນສະໄໝນັ້ນ

[໔໙໐] ວິຕົກ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມນຶກ ຄວາມນຶກໂດຍອາການຕ່າງ ໆ ຄວາມດຳຣິ ຄວາມທີ່ຈິດແນບແໜ້ນໃນອາລົມ ຄວາມທີ່ຈິດແນບສະນິດໃນອາລົມ ຄວາມຍົກຈິດຂຶ້ນສູ່ອາລົມ ໃນສະໄໝນັ້ນ ນີ້ຊື່ວ່າວິຕົກທີ່ເກີດຂຶ້ນໃນສະໄໝນັ້ນ

[໔໙໑] ວິຈານ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕອງ ຄວາມພິຈາລະນາ ຄວາມຕາມພິຈາລະນາ ຄວາມເຂົ້າໄປພິຈາລະນາ ຄວາມທີ່ຈິດສືບຕໍ່ອາລົມ ຄວາມທີ່ຈິດເພ່ງອາລົມ ໃນສະໄໝນັ້ນ ນີ້ຊື່ວ່າ ວິຈານທີ່ເກີດຂຶ້ນໃນ ສະໄໝນັ້ນ

[໔໙໒] ອຸເປກຂາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສຳຣານທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກອັນເກີດແຕ່ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ອຸເປກຂາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໙໓] ເອກັກຄະຕາ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ໃນສະໄໝນັ້ນ ນີ້ຊື່ວ່າເອກັກຄະຕາທີ່ເກີດຂຶ້ນໃນສະໄໝນັ້ນ

[໔໙໔] ມະນິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຈິດ ມະໂນ ມານັດ ຫະທະຍັງ ປັນທະຣະ ມະໂນ ມະນາຍະຕະນະ ມະນິນຊີ ວິນຍານ ວິນຍານຂັນ ແລະມະໂນວິນຍານທາດ ທີ່ເໝາະສົມກັນ ໃນສະໄໝນັ້ນ ນີ້ຊື່ວ່າ ມະນິນຊີທີ່ເກີດຂຶ້ນໃນສະໄໝນັ້ນ

[໔໙໕] ອຸເປກຂິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຄວາມສຳຣານທາງໃຈກໍບໍ່ແມ່ນ ຄວາມບໍ່ສຳຣານທາງໃຈກໍບໍ່ແມ່ນ ຄວາມສະເຫວີຍອາລົມ ທີ່ບໍ່ທຸກບໍ່ສຸກ ອັນເກີດແຕ່ເຈໂຕສຳຜັດ ກິຣິຍາສະເຫວີຍອາລົມທີ່ບໍ່ທຸກບໍ່ສຸກອັນເກີດແຕ່ ເຈໂຕສຳຜັດ ໃນສະໄໝນັ້ນ ນີ້ຊື່ວ່າ ອຸເປກຂິນຊີທີ່ເກີດຂຶ້ນໃນສະໄໝນັ້ນ

[໔໙໖] ຊີວິຕິນຊີ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ອາຍຸ ຄວາມດຳຣົງຢູ່ ຄວາມເປັນໄປ ກິຣິຍາທີ່ໃຫ້ເປັນໄປ ອາການທີ່ສືບເນື່ອງກັນ ຄວາມດຳເນີນໄປ ຄວາມຫຼໍ່ລ້ຽງ ຊີວິດ ຊີວິຕິນຊີ ແຫ່ງສະພາວະທຳທີ່ບໍ່ເປັນຮູບເຫຼົ່ານັ້ນ ໃນ ສະໄໝນັ້ນ ນີ້ຮຽກວ່າ ຊີວິຕິນຊີທີ່ເກີດຂຶ້ນໃນສະໄໝນັ້ນ ຫຼື ສະພາວະທຳທີ່ບໍ່ເປັນຮູບເຊິ່ງ ອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

ຂັນ ໔ ອາຍະຕະນະ ໒ ທາດ ໒ ອາຫານ ໓ ອິນຊີ ໓ ຜັດສະ ໑ ໗ລ໗ ມະໂນວິນຍານທາດ ໑ ທຳມາຍະຕະນະ ໑ ແລະທຳມະທາດ ໑ ໃນສະໄໝນັ້ນ ຫຼື ສະພາວະທຳ ທີ່ບໍ່ເປັນຮູບ

ເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ ຯລຯ

[໔໙] ສັງຂານຂັນ ທີ່ເກີດຂຶ້ນໃນສະໄໝນັ້ນ ເປັນແນວໃດ?

ຜັດສະ ເຈຕະນາ ວິຕົກ ວິຈານ ເອກັກຄະຕາ ແລະຊີວິຕິນຊີ ຫຼື ສະພາວະທຳທີ່ບໍ່ເປັນຮູບ ເຊິ່ງອີງອາໄສກັນເກີດຂຶ້ນແມ່ນອື່ນໃນສະໄໝນັ້ນ ເວັ້ນເວທະນາຂັນ ສັນຍາຂັນ ແລະວິນຍານຂັນ ນີ້ ຊື່ວ່າ ສັງຂານຂັນທີ່ເກີດຂຶ້ນໃນສະໄໝນັ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

**ມະໂນວິນຍານທາດທີ່ເປັນກຸສົນວິບາກປະກອບດ້ວຍອຸເປກຂາ ຈົບ**

## ມະຫາວິປາກະຈິດ ໘

[໔໘] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ຍ້ອນໄດ້ເຮັດໄດ້ສັ່ງສົມກາມາວະຈອນກຸສົນກຳໄວ້ ມະໂນວິນຍານທາດທີ່ເປັນວິບາກ ປະກອບດ້ວຍໂສມະນັດ ປະກອບດ້ວຍປັນຍາ ຯລຯ ເກີດພ້ອມດ້ວຍໂສມະນັດ ປະກອບດ້ວຍ ປັນຍາ ເກີດຂຶ້ນໂດຍມີເຫດດຶງຈູງ ຯລຯ ເກີດພ້ອມດ້ວຍໂສມະນັດ ວິບປະຍຸດຈາກຍານ ຯລຯ ເກີດພ້ອມ ດ້ວຍໂສມະນັດ ວິບປະຍຸດຈາກຍານ ເກີດຂຶ້ນໂດຍມີເຫດດຶງຈູງ ເກີດພ້ອມດ້ວຍອຸ ເປກຂາ ປະກອບດ້ວຍປັນຍາ ຯລຯ ເກີດພ້ອມດ້ວຍອຸເປກຂາ ປະກອບດ້ວຍປັນຍາ ເກີດຂຶ້ນ ໂດຍມີເຫດດຶງຈູງ ເກີດພ້ອມດ້ວຍອຸເປກຂາ ວິບປະຍຸດຈາກຍານ ຯລຯ ເກີດພ້ອມດ້ວຍອຸເປກ ຂາ ວິບປະຍຸດຈາກຍານ ມີຮູບເປັນອາລົມ ຯລຯ ມີທຳເປັນອາລົມ ຫຼື ຜາຣົບອາລົມໃດ ໆ ເກີດ ຂຶ້ນ ໂດຍມີເຫດດຶງຈູງໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ ຯລຯ ອັບພະຍາກະຕະມູນຄືອະໂລພະ ຯລຯ ອັບພະຍາກະຕະມູນຄືອະໂທສະ ຯລຯ ອັບພະຍາກະຕະມູນຄືອະໂມຫະ ຯລຯ ສະພາວະ ທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

**ມະຫາວິປາກະຈິດ ໘ ຈົບ**

## ຮູບປາວະຈອນວິປາກະຈິດ

[໔໙] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ໂຍຄາວະຈອນບຸກຄົນຈະເລີນມັກເພື່ອເຂົ້າເຖິງຮູບພົບ ສະຫງັດຈາກກາມ ຯລຯ ບັນລຸ ປະຖົມຊານທີ່ມີປະຖະວີກະສິນເປັນອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກ ເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

[໕໗໘] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ພຣະຂີນາສົບຈະເລີນຊານທີ່ເປັນຮູບປາວະຈອນ ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ແລະບໍ່ເປັນວິບາກຂອງກຳ ແຕ່ເປັນພຽງທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ຍ້ອນວິຕົກວິຈານສະງົບ ຣະງັບໄປແລ້ວ ຯລຯ ບັນລຸທຸຕິຍະຊານ ຯລຯ ບັນລຸຕະຕິຍະຊານ ຯລຯ ບັນລຸ ຈະຕຸດຖະຊານ ຯລຯ ບັນລຸປະຖົມຊານ ຯລຯ ບັນລຸປັນຈະມະຊານ ທີ່ມີປະຖະວີກະສິນເປັນ ອາລົມ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

**ຮູບປາວະຈອນກິຣິຍາຈິດ ຈົບ**

## ອະຮູບປາວະຈອນກິຣິຍາຈິດ

[໕໗໙] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ພຣະຂີນາສົບຈະເລີນຊານທີ່ເປັນອະຮູບປາວະຈອນ ເປັນກິຣິຍາ ບໍ່ເປັນກຸສົນບໍ່ເປັນອະກຸສົນ ແລະບໍ່ເປັນວິບາກຂອງກຳ ແຕ່ເປັນພຽງທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ຍ້ອນກ້າວລ່ວງຮູບສັນຍາ ໂດຍປະການທັງປວງ ຍ້ອນປະຕິຄະສັນຍາດັບໄປ ຍ້ອນບໍ່ມະນະສິການເຖິງນານັດຕະສັນຍາ ຈຶ່ງບັນລຸຈະຕຸດຖະຊານທີ່ປະກອບດ້ວຍອາກາສານັນຈາຍະຕະນະສັນຍາ ບໍ່ມີທຸກ ບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ຯລຯ ຢູ່ໃນສະໄໝໃດໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

[໕໘໐] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ພຣະຂີນາສົບຈະເລີນຊານທີ່ເປັນອະຮູບປາວະຈອນ ເປັນກິຣິຍາ ບໍ່ເປັນກຸສົນບໍ່ເປັນອະກຸສົນ ແລະບໍ່ເປັນວິບາກກຳແຕ່ເປັນພຽງທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ຍ້ອນກ້າວລ່ວງ ອາກາສານັນຈາຍະຕະນະໄດ້ໂດຍປະການທັງປວງ ຈຶ່ງບັນລຸຈະຕຸດຖະຊານທີ່ປະກອບດ້ວຍວິນຍານັນຈາຍະຕະນະສັນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ຯລຯ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

[໕໘໑] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ພຣະຂີນາສົບຈະເລີນຊານທີ່ເປັນອະຮູບປາວະຈອນ ເປັນກິຣິຍາ ບໍ່ເປັນກຸສົນບໍ່ເປັນອະກຸສົນ ແລະບໍ່ເປັນວິບາກກຳ ແຕ່ເປັນພຽງທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ຍ້ອນກ້າວລ່ວງວິນຍານັນຈາຍະຕະນະໄດ້ໂດຍປະການທັງປວງ ຈຶ່ງບັນລຸຈະຕຸດຖະຊານທີ່ປະກອບດ້ວຍ ອາກິນຈັນຍາຍະຕະນະສັນຍາ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ຯລຯ ຢູ່ໃນສະໄໝໃດ ໃນ ສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

[໕໗໔] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ພຣະຂີນາສົບຈະເລີນຊານທີ່ເປັນອະຣູບປາວະຈອນ ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ແລະບໍ່ເປັນວິບາກຂອງກຳ ແຕ່ເປັນພຽງທຳເຄື່ອງຢູ່ເປັນສຸກໃນປັດຈຸບັນ ຍ້ອນກ້າວ ລ່ວງອາກິນຈັນຍາຍະຕະນະໄດ້ໂດຍປະການທັງປວງ ຈຶ່ງບັນລຸຈະຕຸດຖະຊານທີ່ປະກອບດ້ວຍ ເນວະສັນຍານາສັນຍາຍະຕະນະ ບໍ່ມີທຸກບໍ່ມີສຸກ ຍ້ອນລະສຸກແລະທຸກໄດ້ ຯລຯ ຢູ່ໃນສະໄໝໃດ ໃນສະໄໝນັ້ນ ຜັດສະ ຯລຯ ອະວິກເຂປະ ກໍເກີດຂຶ້ນ ຯລຯ ສະພາວະທຳເຫຼົ່ານີ້ ຊື່ວ່າ ເປັນອັບພະຍາກະຕະ ຯລຯ

ອັບພະຍາກະຕະມູນ ຄື ອະໂລພະ ຯລຯ ອັບພະຍາກະຕະມູນ ຄື ອະໂທສະ ຯລຯ ອັບພະຍາກະຕະມູນ ຄື ອະໂມຫະ ຯລຯ ສະພາວະທຳເຫຼົ່ານີ້ຊື່ວ່າເປັນ ອັບພະຍາກະຕະ

**ອະຣູບປາວະຈອນກິຣິຍາຈິດ ຈົບ**

**ອັບພະຍາກະຕະບົດ ຈົບ**

**ຈິດຕຸບປາທະກັນ ຈົບ**

# ໔. ຣູບປະກັນ

## ອຸດເທດ

[໕໗໕] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ວິບາກແຫ່ງສະພາວະທຳທີ່ເປັນກຸສົນ ແລະອະກຸສົນ ເຊິ່ງເປັນກາມາວະຈອນ ຣູບປາວະຈອນ ອະຣູບປາວະຈອນ ແລະບໍ່ນັບເນື່ອງໃນອັດຕະທຸກ ໄດ້ແກ່ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ

ສະພາວະທຳເຫຼົ່າໃດເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ແລະບໍ່ເປັນວິບາກ ແຫ່ງກຳຣູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ

ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບພະຍາກະຕະ

## ເອກກະມາຕິກາ

[໕໗໖] ບັນດາສະພາວະທຳທີ່ເປັນອັບພະຍາກະຕະເຫຼົ່ານັ້ນ ຣູບທັງໝົດ ເປັນແນວໃດ?

ມະຫາພູຕະຣູບ ໔ ແລະຣູບທີ່ອາໄສມະຫາພູຕະຣູບ ໔ ນີ້ຮຽກວ່າຣູບທັງໝົດ

ຮູບທັງໝົດບໍ່ເປັນເຫດ ບໍ່ມີເຫດ ວິບປະຍຸດຈາກເຫດ ມີປັດໄຈປຸງແຕ່ງ ຖືກປັດໄຈ ປຸງແຕ່ງເປັນຮູບ ເປັນໂລກີຍະ ເປັນອາລົມຂອງອາສະວະ ເປັນອາລົມຂອງສັງໂຍດ ເປັນອາລົມຂອງຄັນຖະ ເປັນອາລົມຂອງໂອຄະ ເປັນອາລົມຂອງໂຍຄະ ເປັນອາລົມຂອງນິວອນ ເປັນອາລົມຂອງປະຣາມາດ ເປັນອາລົມຂອງອຸປາທານ ເປັນອາລົມຂອງກິເລດ ເປັນອັບພະຍາກະຕະ ຮັບຮູ້ອາລົມບໍ່ໄດ້ ບໍ່ເປັນເຈຕະສິກ ວິບປະຍຸດຈາກຈິດ ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດ ບໍ່ແມ່ນມີທັງວິຕົກແລະວິຈານ ບໍ່ແມ່ນບໍ່ມີວິຕົກມີພຽງວິຈານ ບໍ່ມີທັງວິຕົກແລະວິຈານ ບໍ່ປະກອບດ້ວຍປີຕິບໍ່ປະກອບດ້ວຍສຸກ ບໍ່ປະກອບດ້ວຍອຸເປກຂາ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ບໍ່ເປັນເຫດໃຫ້ເຖິງປະຕິສົນທິຈຸຕິ ແລະນິບພານ ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນ ເປັນປະຣິດຕະ ເປັນກາມາວະຈອນ ບໍ່ເປັນຮູບປາວະຈອນ ບໍ່ເປັນອະຮູບປາວະຈອນ ນັບເນື່ອງໃນວັດຕະທຸກ ບໍ່ແມ່ນບໍ່ນັບເນື່ອງ ໃນວັດຕະທຸກ ເປັນຂອງບໍ່ແນ່ນອນ ບໍ່ເປັນເຫດນຳອອກຈາກວັດຕະທຸກ ເປັນທຳທີ່ເກີດຂຶ້ນ ອັນວິນຍານ ໖ ຮູ້ໄດ້ ເປັນຂອງບໍ່ທ່ຽງ ຖືກຊະຣາຄອບງຳ

ລວມຮູບໝວດລະ ໑ ຢ່າງ ແນວນີ້

**ເອກກະມາຕິກາ ຈົບ**

## ທຸກະມາຕິກາ

## ລວມຮູບໝວດລະ ໒

## ປະກິນນະກະທຸກະ

ຮູບທີ່ເປັນອຸປາທາຍະຮູບກໍມີ (໕໙໕-໖໔໕) ຮູບທີ່ບໍ່ເປັນອຸປາທາຍະຮູບກໍມີ (໖໔໖-໖໕໑)

ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຢຶດຖືກໍມີ (໖໕໒) ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືກໍມີ (໖໕໓)

ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຢຶດຖື ແລະເປັນອາລົມຂອງອຸປາທານກໍມີ (໖໕໔) ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຢຶດຖືແຕ່ເປັນອາລົມຂອງອຸປາທານກໍມີ (໖໕໕)

ຮູບທີ່ເຫັນໄດ້ກໍມີ (໖໕໖) ຮູບທີ່ເຫັນບໍ່ໄດ້ກໍມີ (໖໕໗)

ຮູບທີ່ກະທົບໄດ້ກໍມີ (໖໕໘) ຮູບທີ່ກະທົບບໍ່ໄດ້ກໍມີ (໖໕໙)

ຮູບທີ່ເປັນອິນຊີກໍມີ (໖໖໐) ຮູບທີ່ບໍ່ເປັນອິນຊີກໍມີ (໖໖໑)

ຮູບທີ່ເປັນມະຫາພູຕະຮູບກໍມີ (໕໖໔) ຮູບທີ່ບໍ່ເປັນມະຫາພູຕະຮູບກໍມີ (໕໕໓)
ຮູບທີ່ເປັນວິນຍັດຕິຮູບກໍມີ (໕໖໔) ຮູບທີ່ບໍ່ເປັນວິນຍັດຕິຮູບກໍມີ (໕໖໕)
ຮູບທີ່ມີຈິດເປັນສະມຸດຖານກໍມີ (໕໖໖) ຮູບທີ່ບໍ່ມີຈິດເປັນສະມຸດຖານກໍມີ (໕໗໗)
ຮູບທີ່ເກີດພ້ອມກັບຈິດກໍມີ (໕໖໙) ຮູບທີ່ບໍ່ເກີດພ້ອມກັບຈິດກໍມີ (໕໖໘)
ຮູບທີ່ເປັນໄປຕາມຈິດກໍມີ (໕໗໐) ຮູບທີ່ບໍ່ເປັນໄປຕາມຈິດກໍມີ (໕໗໑)
ຮູບທີ່ເປັນພາຍໃນກໍມີ (໕໗໒) ຮູບທີ່ເປັນພາຍນອກກໍມີ (໕໗໓)
ຮູບທີ່ຫຍາບກໍມີ (໕໗໔) ຮູບທີ່ລະອຽດກໍມີ (໕໗໕)
ຮູບໄກກໍມີ (໕໗໖) ຮູບໃກ້ກໍມີ (໕໗໗)

**ປະກິນນະກະທຸກະ ຈົບ**

## ວັດຖຸທຸກະ

ຮູບເປັນບ່ອນອາໄສເກີດຂອງຈັກຂຸສໍາຜັດກໍມີ (໕໗໘)

ຮູບບໍ່ເປັນບ່ອນອາໄສເກີດຂອງຈັກຂຸສໍາຜັດກໍມີ (໕໗໙)

ຮູບເປັນບ່ອນອາໄສເກີດຂອງເວທະນາທີ່ເກີດແຕ່ຈັກຂຸສໍາຜັດ ຯລຯ ຂອງສັນຍາ ຯລຯ ຂອງເຈຕະນາ ຯລຯ ຂອງຈັກຂຸວິນຍານກໍມີ (໕໘໐)

ຮູບບໍ່ເປັນບ່ອນອາໄສເກີດຂອງຈັກຂຸວິນຍານກໍມີ (໕໘໑)

ຮູບເປັນບ່ອນອາໄສເກີດຂອງໂສຕະສໍາຜັດ ຯລຯ ຂອງຄານະສໍາຜັດຯລຯ ຂອງຊິວຫາສໍາຜັດ ຯລຯ ຂອງກາຍສໍາຜັດກໍມີ (໕໘໒)

ຮູບບໍ່ເປັນບ່ອນອາໄສເກີດຂອງກາຍສໍາຜັດກໍມີ (໕໘໓)

ຮູບເປັນບ່ອນອາໄສເກີດຂອງເວທະນາທີ່ເກີດແຕ່ກາຍສໍາຜັດ ຯລຯ ຂອງສັນຍາ ຯລຯ ຂອງເຈຕະນາ ຯລຯ ຂອງກາຍວິນຍານກໍມີ (໕໘໔)

ຮູບບໍ່ເປັນບ່ອນອາໄສເກີດຂອງກາຍວິນຍານກໍມີ (໕໘໕)

**ວັດຖຸທຸກະ ຈົບ**

## ອາຣົມມະນະທຸກະ

ຮູບທີ່ເປັນອາລົມຂອງຈັກຂຸສໍາຜັດກໍມີ (໕໘໖) ຮູບທີ່ບໍ່ເປັນອາລົມຂອງຈັກຂຸສໍາຜັດກໍມີ (໕໘໗)

ຮູບທີ່ເປັນອາລົມຂອງເວທະນາທີ່ເກີດແຕ່ຈັກຂຸສໍາຜັດ ຯລຯ ຂອງສັນຍາ ຯລຯ ຂອງເຈຕະນາ ຯລຯ ຂອງຈັກຂຸວິນຍານກໍມີ (໕໘໙) ຮູບທີ່ບໍ່ເປັນອາລົມຂອງຈັກຂຸວິນຍານ ກໍມີ (໕໘໘)

ຮູບທີ່ເປັນອາລົມຂອງໂສຕະສໍາຜັດ ຯລຯ ຂອງຄານະສໍາຜັດ ຯລຯ ຂອງຊິວຫາສໍາຜັດ ຯລຯ ຂອງກາຍສໍາຜັດກໍມີ (໕໘໐) ຮູບທີ່ບໍ່ເປັນອາລົມຂອງກາຍສໍາຜັດກໍມີ (໕໘໑)

ຮູບທີ່ເປັນອາລົມຂອງເວທະນາທີ່ເກີດແຕ່ກາຍສຳຜັດ໗ລ໗ ຂອງສັນຍາ ໗ລ໗ ຂອງເຈຕະນາ ໗ລ໗ ຂອງກາຍວິນຍານກໍມີ (໘໙໔) ຮູບທີ່ບໍ່ເປັນອາລົມຂອງກາຍວິນຍານກໍມີ (໘໙໖)

**ອາຣົາມະນະທຸກະ ຈົບ**

## ອາຍະຕະນະທຸກະ

ຮູບທີ່ເປັນຈັກຂາຍະຕະນະກໍມີ (໘໙໔) ຮູບທີ່ບໍ່ເປັນຈັກຂາຍະຕະນະກໍມີ (໘໙໕)
ຮູບທີ່ເປັນໂສຕາຍະຕະນະກໍມີ (໘໙໖) ຮູບທີ່ບໍ່ເປັນໂສຕາຍະຕະນະກໍມີ (໘໙໗)
ຮູບທີ່ເປັນຄານາຍະຕະນະ ໗ລ໗ ຮູບທີ່ເປັນຊິວຫາຍະຕະນະ ໗ລ໗
ຮູບທີ່ເປັນກາຍາຍະຕະນະກໍມີ (໘໙໖) ຮູບທີ່ບໍ່ເປັນກາຍາຍະຕະນະກໍມີ (໘໙໗)
ຮູບທີ່ເປັນຮູປາຍະຕະນະກໍມີ (໗໙໘) ຮູບທີ່ບໍ່ເປັນຮູປາຍະຕະນະກໍມີ (໘໙໙)
ຮູບທີ່ເປັນສັດທາຍະຕະນະ ໗ລ໗ ຮູບທີ່ເປັນຄັນທາຍະຕະນະ ໗ລ໗
ຮູບທີ່ເປັນຣະສາຍະຕະນະ ໗ລ໗
ຮູບທີ່ເປັນໂຜດຖັບພາຍະຕະນະກໍມີ (໗໐໐)
ຮູບທີ່ບໍ່ເປັນໂຜດຖັບພາຍະຕະນະກໍມີ (໗໐໑)

**ອາຍະຕະນະທຸກະ ຈົບ**

## ທາຕຸທຸກະ

ຮູບທີ່ເປັນຈັກຂຸທາດກໍມີ (໗໐໔) ຮູບທີ່ບໍ່ເປັນຈັກຂຸທາດກໍມີ (໗໐໖)
ຮູບທີ່ເປັນໂສຕະທາດກໍມີ ໗ລ໗ ຮູບທີ່ເປັນຄານະທາດ ໗ລ໗
ຮູບທີ່ເປັນຊິວຫາທາດ ໗ລ໗ ຮູບທີ່ເປັນກາຍະທາດກໍມີ (໗໐໔)
ຮູບທີ່ບໍ່ເປັນກາຍະທາດກໍມີ (໗໐໕) ຮູບທີ່ເປັນຮູບທາດກໍມີ (໗໐໖)
ຮູບທີ່ບໍ່ເປັນຮູບທາດກໍມີ (໗໐໗) ຮູບທີ່ເປັນສັດທະທາດກໍມີ ໗ລ໗
ຮູບທີ່ເປັນຄັນທະທາດ ໗ລ໗ ຮູບທີ່ເປັນຣະສະທາດ ໗ລ໗
ຮູບທີ່ເປັນໂຜດຖັບພະທາດກໍມີ (໗໐໘) ຮູບທີ່ບໍ່ເປັນໂຜດຖັບພະທາດກໍມີ (໗໐໙)

**ທາຕຸທຸກະ ຈົບ**

## ອິນທະຣິຍະທຸກະ

ຮູບທີ່ເປັນຈັກຂຸນຊີກໍມີ (ກ໑໐)
ຮູບທີ່ບໍ່ເປັນຈັກຂຸນຊີກໍມີ (ກ໑໑)
ຮູບທີ່ເປັນໂສຕິນຊີກໍມີ ຯລຯ
ຮູບທີ່ເປັນຄານິນຊີ ຯລຯ
ຮູບທີ່ເປັນຊິວຫິນຊີ ຯລຯ
ຮູບທີ່ເປັນກາຍິນຊີກໍມີ (ກ໑໘)
ຮູບທີ່ບໍ່ເປັນກາຍິນຊີກໍມີ (ກ໑໓)
ຮູບທີ່ເປັນອິດຖີນຊີກໍມີ (ກ໑໔)
ຮູບທີ່ບໍ່ເປັນອິດຖີນຊີກໍມີ (ກ໑໕)
ຮູບທີ່ເປັນປຸຣິສິນຊີກໍມີ (ກ໑໖)
ຮູບທີ່ບໍ່ເປັນປຸຣິສິນຊີກໍມີ (ກ໑໗)
ຮູບທີ່ເປັນຊີວິຕິນຊີກໍມີ (ກ໑໘)
ຮູບທີ່ບໍ່ເປັນຊີວິຕິນຊີກໍມີ (ກ໑໙)

**ອິນທະຣິຍະທຸກະ ຈົບ**

## ສຸຂຸມະຮູປະທຸກະ

ຮູບທີ່ເປັນກາຍວິນຍັດກໍມີ (ກ໘໐)
ຮູບທີ່ບໍ່ເປັນກາຍວິນຍັດກໍມີ (ກ໘໑)
ຮູບທີ່ເປັນວະຈີວິນຍັດຕິກໍມີ (ກ໘໘)
ຮູບທີ່ບໍ່ເປັນວະຈີວິນຍັດກໍມີ (ກ໘໓)
ຮູບທີ່ເປັນອາກາສະທາດກໍມີ (ກ໘໔)
ຮູບທີ່ບໍ່ເປັນອາກາສະທາດກໍມີ (ກ໘໕)
ຮູບທີ່ເປັນອາໂປທາດກໍມີ (ກ໘໖)
ຮູບທີ່ບໍ່ເປັນອາໂປທາດກໍມີ (ກ໘໗)
ຮູບທີ່ເປັນລະຫຸຕາຮູບກໍມີ (ກ໘໘)
ຮູບທີ່ບໍ່ເປັນລະຫຸຕາຮູບກໍມີ (ກ໘໙)
ຮູບທີ່ເປັນມຸທຸຕາຮູບກໍມີ (ກ໓໐)
ຮູບທີ່ບໍ່ເປັນມຸທຸຕາຮູບກໍມີ (ກ໓໑)
ຮູບທີ່ເປັນກຳມັນຍະຕາຮູບກໍມີ(ກ໓໘)
ຮູບທີ່ບໍ່ເປັນກຳມັນຍະຕາຮູບກໍມີ (ກ໓໓)
ຮູບທີ່ເປັນອຸປະຈະຍະຮູບກໍມີ (ກ໓໔)
ຮູບທີ່ບໍ່ເປັນອຸປະຈະຍະຮູບກໍມີ (ກ໓໕)
ຮູບທີ່ເປັນສັນຕະຕິຮູບກໍມີ (ກ໓໖)
ຮູບທີ່ບໍ່ເປັນສັນຕະຕິຮູບກໍມີ (ກ໓໗)
ຮູບທີ່ເປັນຊະຣະຕາຮູບກໍມີ (ກ໓໘)
ຮູບທີ່ບໍ່ເປັນຊະຣະຕາຮູບກໍມີ (ກ໓໙)
ຮູບທີ່ເປັນອະນິດຈະຕາຮູບກໍມີ (ກ໔໐)
ຮູບທີ່ບໍ່ເປັນອະນິດຈະຕາຮູບກໍມີ (ກ໔໑)
ຮູບທີ່ເປັນກະວະລິງກາຣາຫານກໍມີ (ກ໔໘)
ຮູບທີ່ບໍ່ເປັນກະວະລິງກາຣາຫານກໍມີ (ກ໔໓)

**ສຸຂຸມະຮູປະທຸກະ ຈົບ**

ລວມຮູບໝວດລະ ໘ ແນວນີ້

**ທຸກະມາຕິກາ ຈົບ**

# ຕິກະມາຕິກາ

## ລວມຮູບໝວດລະ ໓

## ປະກິນນະກະຕິກະ

### ອັດຊັດຕິກະອຸປາທາຕິກະ

[໕໗໕] ຮູບທີ່ເປັນພາຍໃນ ເປັນອຸປາທາຍະຮູບ (ກ໔໔) ຮູບທີ່ເປັນພາຍນອກ ເປັນອຸປາທາຍະຮູບກໍມີ (ກ໔໕) ຮູບທີ່ເປັນພາຍນອກ ບໍ່ເປັນອຸປາທາຍະຮູບກໍມີ (ກ໔໖)

### ອັດຊັດຕິກະອຸປາທິນນະຕິກະ

ຮູບທີ່ເປັນພາຍໃນ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື (ກ໔ກ) ຮູບທີ່ເປັນພາຍນອກ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືກໍມີ (ກ໔໘) ຮູບທີ່ເປັນພາຍນອກ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືກໍມີ (ກ໔໙)

### ອັດຊັດຕິກະອຸປາທິນນຸປາທານິຍະຕິກະ

ຮູບທີ່ເປັນພາຍໃນ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານ (ກ໕໐) ຮູບທີ່ເປັນພາຍນອກ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ (ກ໕໑) ຮູບທີ່ເປັນພາຍນອກ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ (ກ໕໒)

### ອັດຊັດຕິກະອະນິທັດສະນະຕິກະ

ຮູບທີ່ເປັນພາຍໃນ ເປັນຮູບທີ່ເຫັນບໍ່ໄດ້ (ກ໕໓) ຮູບທີ່ເປັນພາຍນອກ ເປັນຮູບທີ່ເຫັນໄດ້ ກໍມີ (ກ໕໔) ຮູບທີ່ເປັນພາຍນອກ ເປັນຮູບທີ່ເຫັນບໍ່ໄດ້ກໍມີ (ກ໕໕)

### ອັດຊັດຕິກະສັບປະຕິຄະຕິກະ

ຮູບທີ່ເປັນພາຍໃນ ເປັນຮູບທີ່ກະທົບໄດ້ (ກ໕໖) ຮູບທີ່ເປັນພາຍນອກ ເປັນຮູບທີ່ກະທົບໄດ້ກໍມີ (ກ໕ກ) ຮູບທີ່ເປັນພາຍນອກ ເປັນຮູບທີ່ກະທົບບໍ່ໄດ້ກໍມີ (ກ໕໘)

## ອັດຊັດຕິກະອິນທະຣິຍະຕິກະ

ຮູບທີ່ເປັນພາຍໃນ ເປັນອິນທະຣິຍະຮູບ (໗໕໙) ຮູບທີ່ເປັນພາຍນອກ ເປັນອິນທະຣິຍະຮູບກໍມີ (໗໖໐) ຮູບທີ່ເປັນພາຍນອກ ບໍ່ເປັນອິນທະຣິຍະຮູບກໍມີ (໗໖໑)

## ອັດຊັດຕິກະມະຫາພູຕະຕິກະ

ຮູບທີ່ເປັນພາຍໃນບໍ່ເປັນມະຫາພູຕະຮູບ (໗໖໒) ຮູບທີ່ເປັນພາຍນອກ ເປັນມະຫາພູຕະຮູບກໍມີ (໗໖໓) ຮູບທີ່ເປັນພາຍນອກ ບໍ່ເປັນມະຫາພູຕະຮູບກໍມີ (໗໖໔)

## ອັດຊັດຕິກະນະວິນຍັດຕິກະ

ຮູບທີ່ເປັນພາຍໃນບໍ່ເປັນວິນຍັດຕິຮູບ (໗໖໕) ຮູບທີ່ເປັນພາຍນອກ ເປັນວິນຍັດຕິຮູບກໍມີ (໗໖໖) ຮູບທີ່ເປັນພາຍນອກ ບໍ່ເປັນວິນຍັດຕິຮູບກໍມີ (໗໖໗)

## ອັດຊັດຕິກະນະຈິດຕະສະມຸດຖານະຕິກະ

ຮູບທີ່ເປັນພາຍໃນບໍ່ມີຈິດເປັນສະມຸດຖານ (໗໖໘) ຮູບທີ່ເປັນພາຍນອກ ມີຈິດເປັນສະມຸດຖານກໍມີ (໗໖໙) ຮູບທີ່ເປັນພາຍນອກ ບໍ່ມີຈິດເປັນສະມຸດຖານກໍມີ (໗໗໐)

## ອັດຊັດຕິກະນະຈິດຕະສະຫະພູຕິກະ

ຮູບທີ່ເປັນພາຍໃນບໍ່ເກີດພ້ອມກັບຈິດ (໗໗໑) ຮູບທີ່ເປັນພາຍນອກ ທີ່ເກີດພ້ອມກັບຈິດກໍມີ (໗໗໒) ຮູບທີ່ເປັນພາຍນອກ ບໍ່ເກີດພ້ອມກັບຈິດກໍມີ (໗໗໓)

## ອັດຊັດຕິກະນະຈິດຕານຸປະຣິວັດຕິກະ

ຮູບທີ່ເປັນພາຍໃນບໍ່ເປັນໄປຕາມຈິດ (໗໗໔) ຮູບທີ່ເປັນພາຍນອກ ເປັນໄປຕາມຈິດ ກໍມີ (໗໗໕) ຮູບທີ່ເປັນພາຍນອກ ບໍ່ເປັນໄປຕາມຈິດກໍມີ (໗໗໖)

## ອັດຊັດຕິກະໂອລາຣິກະຕິກະ

ຮູບທີ່ເປັນພາຍໃນ ເປັນຮູບຫຍາບ (໗໗໗) ຮູບທີ່ເປັນພາຍນອກ ເປັນຮູບຫຍາບກໍມີ (໗໗໘) ຮູບທີ່ເປັນພາຍນອກ ເປັນຮູບລະອຽດກໍມີ (໗໗໙)

## ອັດຊັດຕິກະສັນຕິເກຕິກະ

ຮູບທີ່ເປັນພາຍໃນ ເປັນຮູບໃກ້ (ກ໘໐) ຮູບທີ່ເປັນພາຍນອກ ເປັນຮູບໄກກໍມີ (ກ໘໑) ຮູບທີ່ເປັນພາຍນອກ ເປັນຮູບໃກ້ກໍມີ (ກ໘໔)

**ປະກິນນະກະຕິກະ ຈົບ**

## ວັດຖຸຕິກະ

## ພາຫິຣະຈັກຂຸສໍາຜັດສັດສະນະວັດຖຸຕິກະ

ຮູບທີ່ເປັນພາຍນອກ ບໍ່ເປັນບ່ອນອາໄສເກີດຂອງຈັກຂຸສໍາຜັດ (ກ໘໓) ຮູບທີ່ເປັນພາຍໃນ ເປັນບ່ອນອາໄສເກີດຂອງຈັກຂຸສໍາຜັດກໍມີ (ກ໘໔) ຮູບທີ່ເປັນພາຍໃນ ບໍ່ເປັນບ່ອນອາໄສເກີດຂອງຈັກຂຸສໍາຜັດກໍມີ (ກ໘໕)

## ພາຫິຣະຈັກຂຸສໍາຜັດສະຊາເວທະນາຍານະວັດຖຸຕິກະ

ຮູບທີ່ເປັນພາຍນອກ ບໍ່ເປັນບ່ອນອາໄສເກີດຂອງເວທະນາທີ່ເກີດແຕ່ຈັກຂຸສໍາຜັດ ຯລຯ ຂອງສັນຍາ ຯລຯ ຂອງເຈຕະນາ ຯລຯ ຂອງຈັກຂຸວິນຍານ (ກ໘໖) ຮູບທີ່ເປັນພາຍໃນ ເປັນບ່ອນອາໄສເກີດຂອງຈັກຂຸວິນຍານກໍມີ (ກ໘໗) ຮູບທີ່ເປັນພາຍໃນບໍ່ເປັນບ່ອນອາໄສເກີດຂອງຈັກຂຸວິນຍານກໍມີ (ກ໘໘)

## ພາຫິຣະໂສຕະສໍາຜັດສັດສະນະວັດຖຸຕິກາທິຕິກະ

ຮູບທີ່ເປັນພາຍນອກ ບໍ່ເປັນບ່ອນອາໄສເກີດຂອງໂສຕະສໍາຜັດ ຯລຯ ຂອງຄານະສໍາຜັດ ຯລຯ ຂອງຊີວຫາສໍາຜັດ ຯລຯ ຂອງກາຍສໍາຜັດ (ກ໘໙) ຮູບທີ່ເປັນພາຍໃນ ເປັນບ່ອນອາໄສເກີດຂອງກາຍສໍາຜັດກໍມີ (ກ໙໐) ຮູບທີ່ເປັນພາຍໃນ ບໍ່ເປັນບ່ອນອາໄສເກີດຂອງກາຍສໍາຜັດກໍມີ (ກ໙໑)

## ພາຫິຣະກາຍະສໍາຜັດສະຊາເວທະນາຍານະວັດຖຸຕິກາທິຕິກະ

ຮູບທີ່ເປັນພາຍນອກບໍ່ເປັນບ່ອນອາໄສເກີດຂອງເວທະນາທີ່ເກີດແຕ່ກາຍສໍາຜັດ ຯລຯ ຂອງສັນຍາ ຯລຯ ຂອງເຈຕະນາ ຯລຯ ຂອງກາຍວິນຍານ (ກ໙໒) ຮູບທີ່ເປັນພາຍໃນ ເປັນບ່ອນອາໄສເກີດຂອງກາຍວິນຍານກໍມີ (ກ໙໓) ຮູບທີ່ເປັນພາຍໃນ ບໍ່ເປັນບ່ອນອາໄສເກີດຂອງກາຍວິນຍານກໍມີ (ກ໙໔)

**ວັດຖຸຕິກະ ຈົບ**

## ອາຣໍາມະນະຕິກະ

### ອັດຊັດຕິກະຈັກຂຸສໍາຜັດສັດສະນາຣໍາມະນະຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນອາລົມຂອງຈັກຂຸສໍາຜັດ (໗໙໕) ຮູບທີ່ເປັນພາຍນອກ ເປັນອາລົມຂອງຈັກຂຸສໍາຜັດກໍມີ (໗໙໖) ຮູບທີ່ເປັນພາຍນອກ ບໍ່ເປັນອາລົມຂອງຈັກຂຸສໍາຜັດ ກໍມີ (໗໙໗)

### ອັດຊັດຕິກະຈັກຂຸສໍາຜັດສະຊາເວທະນາຍະນາຣໍາມະນະຕິກາທິຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນອາລົມຂອງເວທະນາທີ່ເກີດແຕ່ຈັກຂຸສໍາຜັດ ຯລຯ ຂອງສັນຍາ ຯລຯ ຂອງເຈຕະນາ ຯລຯ ຂອງຈັກຂຸວິນຍານ (໗໙໘) ຮູບທີ່ເປັນພາຍນອກ ເປັນອາລົມຂອງຈັກຂຸວິນຍານກໍມີ (໗໙໙) ຮູບທີ່ເປັນພາຍນອກ ບໍ່ເປັນອາລົມຂອງຈັກຂຸວິນຍານກໍມີ (໘໐໐)

### ອັດຊັດຕິກະໂສຕະສໍາຜັດສັດສະນາຣໍາມະນະຕິກາທິຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນອາລົມຂອງໂສຕະສໍາຜັດ ຯລຯ ຂອງຄານະສໍາຜັດ ຯລຯ ຂອງຊິວຫາສໍາຜັດ ຯລຯ ຂອງກາຍສໍາຜັດ (໘໐໑) ຮູບທີ່ເປັນພາຍນອກ ເປັນອາລົມຂອງກາຍສໍາຜັດກໍມີ (໘໐໒) ຮູບທີ່ເປັນພາຍນອກ ບໍ່ເປັນອາລົມຂອງກາຍສໍາຜັດກໍມີ (໘໐໓)

### ອັດຊັດຕິກະກາຍະສໍາຜັດສະຊາເວທະນາຍະນາຣໍາມະນະຕິກາທິຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນອາລົມຂອງເວທະນາທີ່ເກີດແຕ່ກາຍສໍາຜັດ ຯລຯ ຂອງສັນຍາ ຯລຯ ຂອງເຈຕະນາ ຯລຯ ຂອງກາຍວິນຍານ (໘໐໔) ຮູບທີ່ເປັນພາຍນອກ ເປັນອາລົມຂອງກາຍວິນຍານກໍມີ (໘໐໕) ຮູບທີ່ເປັນພາຍນອກ ບໍ່ເປັນອາລົມຂອງກາຍວິນຍານກໍມີ (໘໐໖)

**ອາຣໍາມະນະຕິກະ ຈົບ**

## ອາຍະຕະນະຕິກະ

### ພາຫິຣະນະຈັກຂາຍະຕະນະຕິກະ

ຮູບທີ່ເປັນພາຍນອກ ບໍ່ເປັນຈັກຂາຍະຕະນະ (໘໐໗) ຮູບທີ່ເປັນພາຍໃນ ເປັນຈັກຂາຍະຕະນະກໍມີ (໘໐໘) ຮູບທີ່ເປັນພາຍໃນ ບໍ່ເປັນຈັກຂາຍະຕະນະກໍມີ (໘໐໙)

## ພາຫິຣະນະໂສຕາຍະຕະນາທິຕິກະ

ຮູບທີ່ເປັນພາຍນອກ ບໍ່ເປັນໂສຕາຍະຕະນະ ຯລຯ ບໍ່ເປັນຄານາຍະຕະນະ ຯລຯ ບໍ່ເປັນຊິວຫາຍະຕະນະ ຯລຯ ບໍ່ເປັນກາຍາຍະຕະນະ (໗໑໐) ຮູບທີ່ເປັນພາຍໃນ ເປັນກາຍາຍະຕະນະກໍມີ (໗໑໑) ຮູບທີ່ເປັນພາຍໃນ ບໍ່ເປັນກາຍາຍະຕະນະກໍມີ (໗໑໒)

## ອັດຊັດຕິກະນະຣູປາຍະຕະນະຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນຣູປາຍະຕະນະ (໗໑໓) ຮູບທີ່ເປັນພາຍນອກ ເປັນຣູປາຍະຕະນະກໍມີ (໗໑໔) ຮູບທີ່ເປັນພາຍນອກ ບໍ່ເປັນຣູປາຍະຕະນະກໍມີ (໗໑໕)

## ອັດຊັດຕິກະນະສັດທາຍະຕະນະຕິກາທິຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນສັດທາຍະຕະນະ ຯລຯ ບໍ່ເປັນຄັນທາຍະຕະນະ ຯລຯ ບໍ່ເປັນຣະສາຍະຕະນະ ຯລຯ ບໍ່ເປັນໂຜດຖັບພາຍະຕະນະ (໗໑໖) ຮູບທີ່ເປັນພາຍນອກ ເປັນໂຜດຖັບພາຍະຕະນະກໍມີ (໗໑໗) ຮູບທີ່ເປັນພາຍນອກ ບໍ່ເປັນໂຜດຖັບພາຍະຕະນະກໍມີ (໗໑໘)

**ອາຍະຕະນະຕິກະ ຈົບ**

## ທາຕຸຕິກະ

## ພາຫິຣະນະຈັກຂຸທາຕຸຕິກະ

ຮູບທີ່ເປັນພາຍນອກ ບໍ່ເປັນຈັກຂຸທາດ (໗໑໙) ຮູບທີ່ເປັນພາຍໃນ ເປັນຈັກຂຸທາດກໍມີ (໗໒໐) ຮູບທີ່ເປັນພາຍໃນ ບໍ່ເປັນຈັກຂຸທາດກໍມີ (໗໒໑)

## ພາຫິຣະນະໂສຕະທາຕຸຕິກາທິຕິກະ

ຮູບທີ່ເປັນພາຍນອກ ບໍ່ເປັນໂສຕະທາດ ຯລຯ ບໍ່ເປັນຄານະທາດ ຯລຯ ບໍ່ເປັນຊິວຫາທາດ ຯລຯ ບໍ່ເປັນກາຍະທາດ (໗໒໒) ຮູບທີ່ເປັນພາຍໃນ ເປັນກາຍະທາດກໍມີ (໗໒໓) ຮູບທີ່ເປັນພາຍໃນ ບໍ່ເປັນກາຍະທາດກໍມີ (໗໒໔)

## ອັດຊັດຕິກະນະຣູປະທາຕຸຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນຣູບທາດ (໗໒໕) ຮູບທີ່ເປັນພາຍນອກ ເປັນຣູບທາດກໍມີ (໗໒໖) ຮູບທີ່ເປັນພາຍນອກ ບໍ່ເປັນຣູບທາດກໍມີ (໗໒໗)

## ອັດຊັດຕິກະນະສັດທະທາຕຸຕິກາທິຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນສັດທະທາດ ຯລຯ ບໍ່ເປັນຄັນທະທາດ ຯລຯ ບໍ່ເປັນຣະສະທາດ ຯລຯ ບໍ່ເປັນໂຜດຖັບພະທາດ (໗໔໗) ຮູບທີ່ເປັນພາຍນອກ ເປັນໂຜດຖັບພະທາດກໍມີ (໗໔໘) ຮູບທີ່ເປັນພາຍນອກ ບໍ່ເປັນໂຜດຖັບພະທາດກໍມີ (໗໕໐)

**ທາຕຸຕິກະ ຈົບ**

## ອິນທະຣິຍະຕິກະ

## ພາຫິຣະນະຈັກຂຸນທະຣິຍະຕິກະ

ຮູບທີ່ເປັນພາຍນອກ ບໍ່ເປັນຈັກຂຸນຊີ (໗໕໑) ຮູບທີ່ເປັນພາຍໃນ ເປັນຈັກຂຸນຊີກໍມີ (໗໕໒) ຮູບທີ່ເປັນພາຍໃນ ບໍ່ເປັນຈັກຂຸນຊີກໍມີ (໗໕໓)

## ພາຫິຣະນະໂສຕິນທະຣິຍະຕິກາທິຕິກະ

ຮູບທີ່ເປັນພາຍນອກ ບໍ່ເປັນໂສຕິນຊີ ຯລຯ ບໍ່ເປັນຄານິນຊີ ຯລຯ ບໍ່ເປັນຊິວຫິນຊີ ຯລຯ ບໍ່ເປັນກາຍິນຊີ (໗໕໔) ຮູບທີ່ເປັນພາຍໃນ ເປັນກາຍິນຊີກໍມີ (໗໕໕) ຮູບທີ່ເປັນພາຍໃນ ບໍ່ເປັນກາຍິນຊີກໍມີ (໗໕໖)

## ອັດຊັດຕິກະນະອິດຖິນທະຣິຍະຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນອິດຖິນຊີ (໗໕໗) ຮູບທີ່ເປັນພາຍນອກ ເປັນອິດຖິນຊີກໍມີ (໗໕໘) ຮູບທີ່ເປັນພາຍນອກ ບໍ່ເປັນອິດຖິນຊີກໍມີ (໗໕໙)

## ອັດຊັດຕິກະນະປຸຣິສິນທະຣິຍະຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນປຸຣິສິນຊີ (໗໖໐) ຮູບທີ່ເປັນພາຍນອກ ເປັນປຸຣິສິນຊີກໍມີ (໗໖໑) ຮູບທີ່ເປັນພາຍນອກ ບໍ່ເປັນປຸຣິສິນຊີກໍມີ (໗໖໒)

## ອັດຊັດຕິກະນະຊີວິຕິນທະຣິຍະຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນຊີວິຕິນຊີ (໗໖໓) ຮູບທີ່ເປັນພາຍນອກ ເປັນຊີວິຕິນຊີກໍມີ (໗໖໔) ຮູບທີ່ເປັນພາຍນອກ ບໍ່ເປັນຊີວິຕິນຊີກໍມີ (໗໖໕)

**ອິນທະຣິຍະຕິກະ ຈົບ**

# ສຸຂຸມະຣູປະຕິກະ

## ອັດຊັດຕິກະນະກາຍະວິນຍັດຕິກະ

ຣູບທີ່ເປັນພາຍໃນ ບໍ່ເປັນກາຍວິນຍັດ (໗໔໖) ຣູບທີ່ເປັນພາຍນອກ ເປັນກາຍວິນຍັດກໍມີ (໗໔໗) ຣູບທີ່ເປັນພາຍນອກ ບໍ່ເປັນກາຍວິນຍັດກໍມີ (໗໔໘)

## ອັດຊັດຕິກະນະວະຈີວິນຍັດຕິກະ

ຣູບທີ່ເປັນພາຍໃນ ບໍ່ເປັນວະຈີວິນຍັດ (໗໔໙) ຣູບທີ່ເປັນພາຍນອກ ເປັນວະຈີວິນຍັດ ກໍມີ (໗໕໐) ຣູບທີ່ເປັນພາຍນອກ ບໍ່ເປັນວະຈີວິນຍັດກໍມີ (໗໕໑)

## ອັດຊັດຕິກະນະອາກາສະທາຕຸຕິກະ

ຣູບທີ່ເປັນພາຍໃນ ບໍ່ເປັນອາກາສະທາດ (໗໕໒) ຣູບທີ່ເປັນພາຍນອກ ເປັນອາກາສະທາດ ກໍມີ (໗໕໓) ຣູບທີ່ເປັນພາຍນອກ ບໍ່ເປັນອາກາສະທາດກໍມີ (໗໕໔)

## ອັດຊັດຕິກະນະອາໂປທາຕຸຕິກະ

ຣູບທີ່ເປັນພາຍໃນ ບໍ່ເປັນອາໂປທາດ (໗໕໕) ຣູບທີ່ເປັນພາຍນອກ ເປັນອາໂປທາດກໍມີ (໗໕໖) ຣູບທີ່ເປັນພາຍນອກ ບໍ່ເປັນອາໂປທາດກໍມີ (໗໕໗)

## ອັດຊັດຕິກະນະຣູປັດສະລະຫຸຕາຕິກະ

ຣູບທີ່ເປັນພາຍໃນ ບໍ່ເປັນລະຫຸຕາຣູບ (໗໕໘) ຣູບທີ່ເປັນພາຍນອກ ເປັນລະຫຸຕາຣູບກໍມີ (໗໕໙) ຣູບທີ່ເປັນພາຍນອກ ບໍ່ເປັນລະຫຸຕາຣູບກໍມີ (໗໖໐)

## ອັດຊັດຕິກະນະຣູປັດສະມຸທຸຕາຕິກະ

ຣູບທີ່ເປັນພາຍໃນ ບໍ່ເປັນມຸທຸຕາຣູບ (໗໖໑) ຣູບທີ່ເປັນພາຍນອກ ເປັນມຸທຸຕາຣູບກໍມີ (໗໖໒) ຣູບທີ່ເປັນພາຍນອກ ບໍ່ເປັນມຸທຸຕາຣູບກໍມີ (໗໖໓)

## ອັດຊັດຕິກະນະຣູປັດສະກໍາມັນຍະຕາຕິກະ

ຣູບທີ່ເປັນພາຍໃນ ບໍ່ເປັນກໍາມັນຍະຕາຣູບ (໗໖໔) ຣູບທີ່ເປັນພາຍນອກ ເປັນກໍາມັນຍະຕາຣູບກໍມີ (໗໖໕) ຣູບທີ່ເປັນພາຍນອກ ບໍ່ເປັນກໍາມັນຍະຕາຣູບກໍມີ (໗໖໖)

## ອັດຊັດຕິກະນະຮູປັດສະອຸປະຈະຍະຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນອຸປະຈະຍະຮູບ (໘໖໗) ຮູບທີ່ເປັນພາຍນອກ ເປັນອຸປະຈະຍະຮູບກໍມີ (໘໖໘) ຮູບທີ່ເປັນພາຍນອກ ບໍ່ເປັນອຸປະຈະຍະຮູບກໍມີ (໘໖໙)

## ອັດຊັດຕິກະນະຮູປັດສະສັນຕະຕິຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນສັນຕະຕິຮູບ (໘໗໐) ຮູບທີ່ເປັນພາຍນອກ ເປັນສັນຕະຕິຮູບກໍມີ (໘໗໑) ຮູບທີ່ເປັນພາຍນອກ ບໍ່ເປັນສັນຕະຕິຮູບກໍມີ (໘໗໒)

## ອັດຊັດຕິກະນະຮູປັດສະຊະນະຕາຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນຊະຣະຕາຮູບ (໘໗໓) ຮູບທີ່ເປັນພາຍນອກ ເປັນຊະຣະຕາຮູບ ກໍມີ (໘໗໔) ຮູບທີ່ເປັນພາຍນອກ ບໍ່ເປັນຊະຣະຕາຮູບກໍມີ (໘໗໕)

## ອັດຊັດຕິກະນະຮູປັດສະອະນິດຈະຕາຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນອະນິດຈະຕາຮູບ (໘໗໖) ຮູບທີ່ເປັນພາຍນອກ ເປັນອະນິດຈະຕາຮູບກໍມີ (໘໗໗) ຮູບທີ່ເປັນພາຍນອກ ບໍ່ເປັນອະນິດຈະຕາຮູບກໍມີ (໘໗໘)

## ອັດຊັດຕິກະນະກະວະລິງກາຣາຫາຣະຕິກະ

ຮູບທີ່ເປັນພາຍໃນ ບໍ່ເປັນກະວະລິງກາຣາຫານ (໘໗໙) ຮູບທີ່ເປັນພາຍນອກ ເປັນກະວະລິງກາຣາຫານກໍມີ (໘໘໐) ຮູບທີ່ເປັນພາຍນອກ ບໍ່ເປັນກະວະລິງກາຣາຫານກໍມີ (໘໘໑)

**ສຸຂຸມະຮູປະຕິກະ ຈົບ**

ລວມຮູບໝວດລະ ໓ ແນວນີ້

**ຕິກະມາຕິກາ ຈົບ**

# ຈະຕຸກກະມາຕິກາ

## ລວມຮູບໝວດລະ ໔

### ອຸປາທາອຸປາທິນນະຈະຕຸກກະ

[໕໘໖] ຮູບທີ່ເປັນອຸປາທາຍະຮູບ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖືກໍມີ (໘໘໔) ຮູບທີ່ເປັນອຸປາທາຍະຮູບ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືກໍມີ (໘໘໓) ຮູບທີ່ບໍ່ເປັນອຸປາທາຍະຮູບ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືກໍມີ (໘໘໔) ຮູບທີ່ບໍ່ເປັນອຸປາທາຍະຮູບ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືກໍມີ (໘໘໕)

### ອຸປາທາອຸປາທິນນຸປາທານິຍະຈະຕຸກກະ

ຮູບທີ່ເປັນອຸປາທາຍະຮູບ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖືແລະເປັນອາລົມຂອງອຸປາທານກໍມີ (໘໘໖) ຮູບທີ່ເປັນອຸປາທາຍະຮູບ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ (໘໘໗) ຮູບທີ່ບໍ່ເປັນອຸປາທາຍະຮູບ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານກໍມີ (໘໘໘) ຮູບທີ່ບໍ່ເປັນອຸປາທາຍະຮູບ ເປັນຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານກໍມີ (໘໘໙)

### ອຸປາທາສັບປະຕິຄະຈະຕຸກກະ

ຮູບທີ່ເປັນອຸປາທາຍະຮູບ ເປັນຮູບທີ່ກະທົບໄດ້ກໍມີ (໘໙໐) ຮູບທີ່ເປັນອຸປາທາຍະຮູບ ເປັນຮູບທີ່ກະທົບບໍ່ໄດ້ກໍມີ (໘໙໑) ຮູບທີ່ບໍ່ເປັນອຸປາທາຍະຮູບ ເປັນຮູບທີ່ກະທົບໄດ້ກໍມີ (໘໙໔) ຮູບທີ່ບໍ່ເປັນອຸປາທາຍະຮູບ ເປັນຮູບທີ່ກະທົບບໍ່ໄດ້ກໍມີ (໘໙໓)

### ອຸປາທາໂອລາຣິກະຈະຕຸກກະ

ຮູບທີ່ເປັນອຸປາທາຍະຮູບ ເປັນຮູບຫຍາບກໍມີ (໘໙໔) ຮູບທີ່ເປັນອຸປາທາຍະຮູບ ເປັນຮູບລະອຽດກໍມີ (໘໙໕) ຮູບທີ່ບໍ່ເປັນອຸປາທາຍະຮູບ ເປັນຮູບຫຍາບກໍມີ (໘໙໖) ຮູບທີ່ບໍ່ເປັນອຸປາທາຍະຮູບ ເປັນຮູບລະອຽດກໍມີ (໘໙໗)

### ອຸປາທາທູເຣຈະຕຸກກະ

ຮູບທີ່ເປັນອຸປາທາຍະຮູບ ເປັນຮູບໄກກໍມີ (໗໙໗) ຮູບທີ່ເປັນອຸປາທາຍະຮູບ ເປັນຮູບໃກ້ ກໍມີ (໗໙໙) ຮູບທີ່ບໍ່ເປັນອຸປາທາຍະຮູບ ເປັນຮູບໄກກໍມີ (໙໐໐) ຮູບທີ່ບໍ່ເປັນອຸປາທາຍະຮູບ ເປັນຮູບໃກ້ກໍມີ (໙໐໑)

## ອຸປາທິນນະສະນິທັດສະນະຈະຕຸກກະ

ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖື ເປັນຮູບທີ່ເຫັນໄດ້ກໍມີ (໙໐໘)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖື ເປັນຮູບທີ່ເຫັນບໍ່ໄດ້ກໍມີ (໙໐໓)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື ເປັນຮູບທີ່ເຫັນໄດ້ກໍມີ (໙໐໔)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື ເປັນຮູບທີ່ເຫັນບໍ່ໄດ້ກໍມີ (໙໐໕)

## ອຸປາທິນນະສັບປະຕິຄະຈະຕຸກກະ

ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖື ເປັນຮູບທີ່ກະທົບໄດ້ກໍມີ (໙໐໖)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖື ເປັນຮູບທີ່ກະທົບບໍ່ໄດ້ກໍມີ (໙໐໗)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື ເປັນຮູບທີ່ກະທົບໄດ້ກໍມີ (໙໐໘)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື ເປັນຮູບທີ່ກະທົບບໍ່ໄດ້ກໍມີ (໙໐໙)

## ອຸປາທິນນະມະຫາພູຕະຈະຕຸກກະ

ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖື ເປັນມະຫາພູຕະຮູບກໍມີ (໙໑໐)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖື ບໍ່ເປັນມະຫາພູຕະຮູບກໍມີ (໙໑໑)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື ເປັນມະຫາພູຕະຮູບກໍມີ (໙໑໘)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື ບໍ່ເປັນມະຫາພູຕະຮູບກໍມີ (໙໑໓)

## ອຸປາທິນນະໂອລາຣິກະຈະຕຸກກະ

ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖື ເປັນຮູບຫຍາບກໍມີ (໙໑໔)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖື ເປັນຮູບລະອຽດກໍມີ (໙໑໕)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື ເປັນຮູບຫຍາບກໍມີ (໙໑໖)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື ເປັນຮູບລະອຽດກໍມີ (໙໑໗)

## ອຸປາທິນນະທູເຣຈະຕຸກກະ

ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຢຶດຖື ເປັນຮູບໄກກໍມີ (໙໑໗)

ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ເປັນຮູບໃກ້ກໍມີ (໗໑໙)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ເປັນຮູບໄກກໍມີ (໗໘໐)
ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ເປັນຮູບໃກ້ກໍມີ (໗໘໑)

## ອຸປາທິນນຸປາທານິຍະສະນິທັດສະນະຈະຕຸກະ

ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານ ເປັນຮູບທີ່ເຫັນໄດ້ກໍມີ (໗໘໘) ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານ ເປັນຮູບທີ່ເຫັນບໍ່ໄດ້ກໍມີ (໗໘໓) ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ເປັນຮູບທີ່ເຫັນໄດ້ກໍມີ (໗໘໔) ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ເປັນຮູບທີ່ເຫັນບໍ່ໄດ້ກໍມີ (໗໘໕)

## ອຸປາທິນນຸປາທານິຍະສັປປະຕິຄະຈະຕຸກະ

ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານ ເປັນຮູບທີ່ກະທົບໄດ້ກໍມີ (໗໘໖) ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານ ເປັນຮູບທີ່ກະທົບບໍ່ໄດ້ກໍມີ (໗໘໗) ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ເປັນຮູບທີ່ກະທົບໄດ້ກໍມີ (໗໘໘) ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ເປັນຮູບທີ່ກະທົບບໍ່ໄດ້ກໍມີ (໗໘໙)

## ອຸປາທິນນຸປາທານິຍະມະຫາພູຕະຈະຕຸກະ

ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານ ເປັນມະຫາພູຕະຮູບກໍມີ (໗໙໐) ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານ ບໍ່ເປັນມະຫາພູຕະຮູບກໍມີ (໗໙໑) ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ເປັນມະຫາພູຕະຮູບກໍມີ (໗໙໒) ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ບໍ່ເປັນມະຫາພູຕະຮູບກໍມີ (໗໙໓)

## ອຸປາທິນນຸປາທານິຍະໂອລາຣິກະຈະຕຸກະ

ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖືແລະເປັນອາລົມຂອງອຸປາທານ ເປັນຮູບຫຍາບກໍມີ (໗໙໔) ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານ ເປັນຮູບລະອຽດກໍມີ (໗໙໕) ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸ

ປາທານ ເປັນຮູບຫຍາບກໍມີ (໗໖) ຮູບທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖືແຕ່ເປັນອາລົມຂອງອຸປາທານ ເປັນຮູບລະອຽດກໍມີ (໗໗)

## ອຸປາທິນນຸປາທານິຍະທູເຣຈະຕຸກາກະ

ຮູບທີ່ກໍາອັນປະກອບດ້ວຍຕັນຫາທິດຖິຢຶດຖືແລະເປັນອາລົມຂອງອຸປາທານ ເປັນຮູບໄກກໍມີ (໗໘) ຮູບທີ່ກໍາອັນປະກອບດ້ວຍຕັນຫາທິດຖິຢຶດຖືແລະເປັນອາລົມຂອງອຸປາທານ ເປັນຮູບໃກ້ກໍມີ (໗໙) ຮູບທີ່ກໍາອັນປະກອບດ້ວຍຕັນຫາແລະທິດຖິບໍ່ຢຶດຖື ແຕ່ເປັນອາລົມຂອງອຸປາທານ ເປັນຮູບໄກກໍມີ (໘໐) ຮູບທີ່ກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຢຶດຖືແຕ່ເປັນອາລົມຂອງອຸປາທານ ເປັນຮູບໃກ້ກໍມີ (໘໑)

## ສັບປະຕິຄະອິນທະຣິຍະຈະຕຸກາກະ

ຮູບທີ່ກະທົບໄດ້ເປັນອິນທະຣິຍະຮູບກໍມີ (໘໒) ຮູບທີ່ກະທົບບໍ່ໄດ້ເປັນອິນທະຣິຍະຮູບກໍມີ (໘໓) ຮູບທີ່ກະທົບບໍ່ໄດ້ເປັນອິນທະຣິຍະຮູບກໍມີ (໘໔) ຮູບທີ່ກະທົບບໍ່ໄດ້ ບໍ່ເປັນອິນທະຣິຍະຮູບກໍມີ (໘໕)

## ສັບປະຕິຄະມະຫາພູຕະຈະຕຸກາກະ

ຮູບທີ່ກະທົບໄດ້ເປັນມະຫາພູຕະຮູບກໍມີ (໘໖) ຮູບທີ່ກະທົບໄດ້ບໍ່ເປັນມະຫາພູຕະຮູບກໍມີ (໘໗) ຮູບທີ່ກະທົບບໍ່ໄດ້ເປັນມະຫາພູຕະຮູບກໍມີ (໘໘) ຮູບທີ່ກະທົບບໍ່ໄດ້ ບໍ່ເປັນມະຫາພູຕຮູບກໍມີ (໘໙)

## ອິນທະຣິຍະໂອລາຣິກະຈະຕຸກາກະ

ຮູບທີ່ເປັນອິນທະຣິຍະຮູບ ເປັນຮູບຫຍາບກໍມີ (໙໐) ຮູບທີ່ເປັນອິນທະຣິຍະຮູບ ເປັນຮູບລະອຽດກໍມີ (໙໑) ຮູບທີ່ບໍ່ເປັນອິນທະຣິຍະຮູບ ເປັນຮູບຫຍາບກໍມີ (໙໒) ຮູບທີ່ບໍ່ເປັນອິນທະຣິຍະຮູບ ເປັນຮູບລະອຽດກໍມີ (໙໓)

## ອິນທະຣິຍະທູເຣຈະຕຸກາກະ

ຮູບທີ່ເປັນອິນທະຣິຍະຮູບ ເປັນຮູບໄກກໍມີ (໙໔) ຮູບທີ່ເປັນອິນທະຣິຍະຮູບ ເປັນຮູບໃກ້ກໍມີ (໙໕) ຮູບທີ່ບໍ່ເປັນອິນທະຣິຍະຮູບ ເປັນຮູບໄກກໍມີ (໙໖) ຮູບທີ່ບໍ່ເປັນອິນທະຣິຍະຮູບ ເປັນຮູບໃກ້ກໍມີ (໙໗)

## ມະຫາພູຕະໂອລາຣິກະຈະຕຸກກະ

ຮູບທີ່ເປັນມະຫາພູຕະຮູບ ເປັນຮູບຫຍາບກໍມີ (໙໕໗) ຮູບທີ່ເປັນມະຫາພູຕະຮູບ ເປັນຮູບລະອຽດກໍມີ (໙໕໙) ຮູບທີ່ບໍ່ເປັນມະຫາພູຕະຮູບ ເປັນຮູບຫຍາບກໍມີ (໙໖໐) ຮູບທີ່ບໍ່ເປັນມະຫາພູຕະຮູບ ເປັນຮູບລະອຽດກໍມີ (໙໖໑)

## ມະຫາພູຕະທູເຣຈະຕຸກກະ

ຮູບທີ່ເປັນມະຫາພູຕະຮູບ ເປັນຮູບໄກກໍມີ (໙໖໒) ຮູບທີ່ເປັນມະຫາພູຕະຮູບ ເປັນຮູບໃກ້ກໍມີ (໙໖໓) ຮູບທີ່ບໍ່ເປັນມະຫາພູຕະຮູບ ເປັນຮູບໄກກໍມີ (໙໖໔) ຮູບທີ່ບໍ່ເປັນມະຫາພູຕະຮູບ ເປັນຮູບໃກ້ກໍມີ (໙໖໕)

## ທິດຖາທິຈະຕຸກກະ

ຮູບເປັນຮູບທີ່ເຫັນໄດ້ ເປັນຮູບທີ່ສະດັບໄດ້ ເປັນຮູບທີ່ຮູ້ໄດ້ ເປັນຮູບທີ່ຮູ້ແຈ້ງໄດ້ (໙໖໖)

ລວມຮູບໝວດລະ ໔ ແນວນີ້

**ຈະຕຸກກະມາຕິກາ ຈົບ**

## ປັນຈະກະມາຕິກາ

## ລວມຮູບໝວດລະ ໕

[໕໗໗] ຮູບທີ່ເປັນປະຖະວີທາດ (໙໖໗) ຮູບທີ່ເປັນອາໂປທາດ (໙໖໘) ຮູບທີ່ເປັນເຕໂຊທາດ (໙໖໙) ຮູບທີ່ເປັນວາໂຍທາດ (໙໗໐) ຮູບທີ່ເປັນອຸປາທາຍະຮູບ (໙໗໑)

ລວມຮູບໝວດລະ ໕ ແນວນີ້

**ປັນຈະກະມາຕິກາ ຈົບ**

## ສັກກະມາຕິກາ

## ລວມຮູບໝວດລະ ໖

[໕໗໘] ຮູບທີ່ຈັກຂຸວິນຍານຮູ້ໄດ້ ຮູບທີ່ໂສຕະວິນຍານຮູ້ໄດ້ ຮູບທີ່ຄານະວິນຍານຮູ້ໄດ້ ຮູບທີ່ຊິວຫາວິນຍານຮູ້ໄດ້ ຮູບທີ່ກາຍະວິນຍານຮູ້ໄດ້ ຮູບທີ່ມະໂນວິນຍານຮູ້ໄດ້ (໙໗໔)

ລວມຮູບໝວດລະ ໖ ແນວນີ້

**ສັກກະມາຕິກາ ຈົບ**

## ສັດຕະກະມາຕິກາ

## ລວມຮູບໝວດລະ ໗

[໕໗໙] ຮູບທີ່ຈັກຂຸວິນຍານຮູ້ໄດ້ ຮູບທີ່ໂສຕະວິນຍານຮູ້ໄດ້ ຮູບທີ່ຄານະວິນຍານຮູ້ໄດ້ ຮູບທີ່ຊິວຫາວິນຍານຮູ້ໄດ້ ຮູບທີ່ກາຍະວິນຍານຮູ້ໄດ້ ຮູບທີ່ມະໂນທາດຮູ້ໄດ້ ຮູບທີ່ມະໂນວິນຍານທາດຮູ້ໄດ້໑ (ໝາ໖)

ລວມຮູບໝວດລະ ໗ ແນວນີ້

### ສັດຕະກະມາຕິກາ ຈົບ

## ອັດຖະກະມາຕິກາ

## ລວມຮູບໝວດລະ ໘

[໕໘໐] ຮູບທີ່ຈັກຂຸວິນຍານຮູ້ໄດ້ ຮູບທີ່ໂສຕະວິນຍານຮູ້ໄດ້ ຮູບທີ່ຄານະວິນຍານຮູ້ໄດ້ ຮູບທີ່ຊິວຫາວິນຍານຮູ້ໄດ້ ຮູບທີ່ກາຍວິນຍານຮູ້ໄດ້ ທີ່ມີສຳຜັດເປັນສຸກກໍມີ ທີ່ມີສຳຜັດເປັນທຸກກໍມີ ຮູບທີ່ມະໂນທາດຮູ້ໄດ້ ຮູບທີ່ມະໂນວິນຍານທາດຮູ້ໄດ້ (ໝາ໘)

ລວມຮູບໝວດລະ ໘ ແນວນີ້

### ອັດຖະກະມາຕິກາ ຈົບ

## ນະວະກະມາຕິກາ

## ລວມຮູບໝວດລະ ໙

[໕໘໑] ຮູບທີ່ເປັນຈັກຂຸນຊີ ຮູບທີ່ເປັນໂສຕິນຊີ ຮູບທີ່ເປັນຄານິນຊີ ຮູບທີ່ເປັນຊິວຫິນຊີ ຮູບທີ່ເປັນກາຍິນຊີ ຮູບທີ່ເປັນອິດຖິນຊີ ຮູບທີ່ເປັນປຸຣິສິນຊີ ຮູບທີ່ເປັນຊີວິຕິນຊີ ຮູບທີ່ບໍ່ເປັນອິນຊີ໑ (ໝາ໕)

ລວມຮູບໝວດລະ ໙ ແນວນີ້

### ນະວະກະມາຕິກາ ຈົບ

## ທະສະກະມາຕິກາ

## ລວມຮູບໝວດລະ ໑໐

[໕໘໘] ຮູບທີ່ເປັນຈັກຂຸນຊີ ຮູບທີ່ເປັນໂສຕິນຊີ ຮູບທີ່ເປັນຄານິນຊີ ຮູບທີ່ເປັນຊິວຫິນຊີ ຮູບ

ທີ່ເປັນກາຍິນຊີ ຮູບທີ່ເປັນອິດຖິນຊີ ຮູບທີ່ເປັນປຸຣິສິນຊີ ຮູບທີ່ເປັນຊີວິຕິນຊີ ຮູບທີ່ບໍ່ເປັນອິນຊີ ທີ່ກະທົບໄດ້ກໍມີ ທີ່ກະທົບບໍ່ໄດ້ກໍມີ (໕໗໖-໕໙໑)

ລວມຮູບໝວດລະ ໑໐ ແນວນີ້

**ທະສະກະມາຕິກາ ຈົບ**

## ເອກາທະສະກະມາຕິກາ

## ລວມຮູບໝວດລະ ໑໑

[໕໙໖] ຮູບທີ່ເປັນຈັກຂາຍະຕະນະ ຮູບທີ່ເປັນໂສຕາຍະຕະນະ ຮູບທີ່ເປັນຄານາຍະຕະນະ ຮູບທີ່ເປັນຊິວຫາຍະຕະນະ ຮູບທີ່ເປັນກາຍາຍະຕະນະ ຮູບທີ່ເປັນຣູປາຍະຕະນະ ຮູບທີ່ເປັນສັດທາຍະຕະນະ ຮູບທີ່ເປັນຄັນທາຍະຕະນະ ຮູບທີ່ເປັນຣະສາຍະຕະນະ ຮູບທີ່ເປັນໂຜດຖັບພາຍະຕະນະ ຮູບທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ ເຊິ່ງນັບເນື່ອງໃນທຳມາຍະຕະນະ (໕໙໒-໕໙໔)

ລວມຮູບໝວດລະ ໑໑ ແນວນີ້

**ເອກາທະສະກະມາຕິກາ ຈົບ**

**ມາຕິກາ ຈົບ**

## ຮູປະວິພັດຕິ

## ເອກກະນິດເທດ

[໕໙໔] ຮູບທັງໝົດບໍ່ເປັນເຫດ ບໍ່ມີເຫດ ວິບປະຍຸດຈາກເຫດ ມີປັດໄຈປຸງແຕ່ງ ຖືກປັດໄຈປຸງແຕ່ງ ເປັນຮູບ ເປັນໂລກິຍະ ເປັນອາລົມຂອງອາສະວະ ເປັນອາລົມຂອງສັງໂຍດ ເປັນອາລົມຂອງຄັນຖະ ເປັນອາລົມຂອງໂອຄະ ເປັນອາລົມຂອງໂຍຄະ ເປັນອາລົມຂອງນິວອນ ເປັນອາລົມຂອງປະຣາມາດ ເປັນອາລົມຂອງອຸປາທານ ເປັນອາລົມຂອງກິເລດ ເປັນອັບພະຍາກະຕະ ຮັບຮູ້ອາລົມບໍ່ໄດ້ ບໍ່ເປັນເຈຕະສິກ ວິບປະຍຸດຈາກຈິດ ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດ ບໍ່ແມ່ນມີທັງວິຕົກແລະວິຈານ ບໍ່ແມ່ນບໍ່ມີວິຕົກມີພຽງວິຈານ ບໍ່ມີທັງວິຕົກແລະວິຈານ ບໍ່ປະກອບດ້ວຍປີຕິ ບໍ່ປະກອບດ້ວຍສຸກ ບໍ່ປະກອບດ້ວຍອຸເປກຂາ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ບໍ່ເປັນເຫດໃຫ້ເຖິງປະຕິສົນທິຈຸຕິ ແລະນິບພານ ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນ ເປັນປະຣິດຕະ ເປັນກາມາວະຈອນ ບໍ່ເປັນຮູບປາວະຈອນ ບໍ່ເປັນອະຮູບປາວະຈອນ ນັບເນື່ອງໃນວັດຕະທຸກ ບໍ່ແມ່ນບໍ່ນັບເນື່ອງໃນວັດຕະທຸກ

ເປັນທຳມະຊາດບໍ່ແນ່ນອນ ບໍ່ເປັນເຫດນຳອອກຈາກວັດຕະທຸກ ເປັນທຳທີ່ເກີດຂຶ້ນ ອັນວິນຍານ ໖ ຮູ້ໄດ້ ເປັນທຳມະຊາດບໍ່ທ່ຽງ ຖືກຊະຣາຄອບງຳ

ລວມຮູບໝວດລະ ໑ ແນວນີ້

**ເອກກະນິດເທດ ຈົບ**

# ທຸກະນິດເທດ

## ປະກິນນະກະທຸກະ

## ອຸປາທາພາຊະນີ

[໕໙໕] ຮູບທີ່ເປັນອຸປາທາຍະຮູບ ນັ້ນເປັນແນວໃດ?

ຈັກຂາຍະຕະນະ ໂສຕາຍະຕະນະ ຄານາຍະຕະນະ ຊິວຫາຍະຕະນະ ກາຍາຍະຕະນະ ຮູປາຍະຕະນະ ສັດທາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ອິດຖິນຊີ ປຸຣິສິນຊີ ຊີວິຕິນຊີ ກາຍະວິນຍັດຕິ ວະຈີວິນຍັດຕິ ອາກາສະທາດ ລະຫຸຕາຮູບ ມຸທຸຕາຮູບ ກຳມັນຍະຕາຮູບ ອຸປະຈະຍະຮູບ ສັນຕະຕິຮູບ ຊະຣະຕາຮູບ ອະນິດຈະຕາຮູບ ແລະກະວະລິງກາຣາຫານ

## ຈັກຂາຍະຕະນະ

[໕໙໖] ຮູບທີ່ເປັນຈັກຂາຍະຕະນະ ນັ້ນເປັນແນວໃດ?

ຈັກຂຸໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ສັດນີ້ ເຄີຍເຫັນ ກຳລັງເຫັນ ຈັກເຫັນ ຫຼື ເພິ່ງເຫັນຮູບທີ່ເຫັນໄດ້ກະທົບໄດ້ ດ້ວຍຈັກຂຸໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ຈັກຂຸແດ່ ຈັກຂາຍະຕະນະແດ່ ຈັກຂຸທາດແດ່ ຈັກຂຸນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ເນດແດ່ ໄນຍະນາແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນຈັກຂາຍະຕະນະ

[໕໙໗] ຮູບທີ່ເປັນຈັກຂາຍະຕະນະ ນັ້ນເປັນແນວໃດ?

ຈັກຂຸໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ຮູບທີ່ເຫັນໄດ້ແລະກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບ ຫຼື ເພິ່ງກະທົບ ທີ່ຈັກຂຸໃດເຊິ່ງເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ຈັກຂຸແດ່ ຈັກຂາຍະຕະນະແດ່ ຈັກຂຸທາດແດ່ ຈັກຂຸນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ເນດແດ່ ໄນຍະນາແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນຈັກຂາຍະຕະນະ

[໕໙໗] ຮູບທີ່ເປັນຈັກຂາຍະຕະນະ ນັ້ນເປັນແນວໃດ?

ຈັກຂຸໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ຈັກຂຸໃດ ເຫັນບໍ່ໄດ້ ເຄີຍກະທົບ ກະທົບແລ້ວ ກຳລັງກະທົບ ຈັກກະທົບ ຫຼື ເພິ່ງກະທົບທີ່ຮູບເຊິ່ງເຫັນໄດ້ແລະກະທົບໄດ້ ນີ້ຊື່ວ່າຈັກຂຸແດ່ ຈັກຂາຍະຕະນະແດ່ ຈັກຂຸທາດແດ່ ຈັກຂຸນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ເນດແດ່ ໄນຍະນາແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າເປັນຈັກຂາຍະຕະນະ

[໕໙໙] ຮູບທີ່ເປັນຈັກຂາຍະຕະນະ ນັ້ນເປັນແນວໃດ?

ຈັກຂຸໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ຍ້ອນອາໄສຈັກຂຸໃດ ຈັກຂຸສຳຜັດຜາຣົບຮູບເປັນອາລົມ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ฯລฯ ຍ້ອນອາໄສຈັກຂຸໃດ ເວທະນາທີ່ເກີດແຕ່ຈັກຂຸສຳຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ຈັກຂຸວິນຍານຜາຣົບຮູບເປັນອາລົມ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ฯລฯ ຍ້ອນອາໄສຈັກຂຸໃດ ຈັກຂຸສຳຜັດມີຮູບເປັນອາລົມ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ฯລฯ ຍ້ອນອາໄສຈັກຂຸໃດ ເວທະນາທີ່ເກີດຈາກ ຈັກຂຸສຳຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ຈັກຂຸວິນຍານມີຮູບເປັນອາລົມ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ນີ້ຊື່ວ່າ ຈັກຂຸແດ່ ຈັກຂາຍະຕະນະແດ່ ຈັກຂຸທາດແດ່ ຈັກຂຸນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ເນດແດ່ ໄນຍະນາແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນຈັກຂາຍະຕະນະ

## ໂສຕາຍະຕະນະ

[໖໐໐] ຮູບທີ່ເປັນໂສຕາຍະຕະນະ ນັ້ນເປັນແນວໃດ?

ໂສຕະໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ສັດນີ້ ເຄີຍຟັງ ກຳລັງຟັງ ຈັກຟັງ ຫຼື ເພິ່ງຟັງສຽງທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ດ້ວຍໂສຕະໃດ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ໂສຕະແດ່ ໂສຕາຍະຕະນະແດ່ ໂສຕະທາດແດ່ ໂສະຕິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນໂສຕາຍະຕະນະ

[໖໐໑] ຮູບທີ່ເປັນໂສຕາຍະຕະນະ ນັ້ນເປັນແນວໃດ?

ໂສຕະໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ສຽງທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບ ຫຼື ເພິ່ງກະທົບ ທີ່ໂສຕະໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າໂສຕະແດ່ ໂສຕາຍະຕະນະແດ່ ໂສຕະ

ທາດແດ່ ໂສະຕິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນໂສຕາຍະຕະນະ

[໖໐໔] ຮູບທີ່ເປັນໂສຕາຍະຕະນະ ນັ້ນເປັນແນວໃດ?

ໂສຕະໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໂສຕະໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບ ຫຼື ເພິ່ງກະທົບສຽງທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ໂສຕະແດ່ ໂສຕາຍະຕະນະແດ່ ໂສຕະທາດແດ່ ໂສະຕິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນໂສຕາຍະຕະນະ

[໖໐໕] ຮູບທີ່ເປັນໂສຕາຍະຕະນະ ນັ້ນເປັນແນວໃດ?

ໂສຕະໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ຍ້ອນອາໄສໂສຕະໃດ ໂສຕະສຳຜັດຜາຣົບສຽງເປັນອາລົມ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ຯລຯ ຍ້ອນອາໄສໂສຕະໃດ ເວທະນາທີ່ເກີດແຕ່ໂສຕະສຳຜັດ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ໂສຕະວິນຍານຜາຣົບສຽງເປັນອາລົມ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ຯລຯ ອາໄສໂສຕະໃດ ໂສຕະສຳຜັດມີສຽງເປັນອາລົມ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ຯລຯ ຍ້ອນອາໄສໂສຕະໃດ ເວທະນາທີ່ເກີດແຕ່ໂສຕະສຳຜັດ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ໂສຕະວິນຍານມີສຽງເປັນອາລົມ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ນີ້ຊື່ວ່າໂສຕະແດ່ ໂສຕາຍະຕະນະແດ່ ໂສຕະທາດແດ່ ໂສຕິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າເປັນໂສຕາຍະຕະນະ

## ຄານາຍະຕະນະ

[໖໐໔] ຮູບທີ່ເປັນຄານາຍະຕະນະ ນັ້ນເປັນແນວໃດ?

ຄານະໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ສັດນີ້ ເຄີຍດົມ ກຳລັງດົມ ຈັກດົມ ຫຼື ເພິ່ງດົມກິ່ນທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ດ້ວຍຄານະໃດ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ຄານະແດ່ ຄານາຍະຕະນະແດ່ ຄານະທາດແດ່ ຄານິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນຄານາຍະຕະນະ

[໖໐໕] ຮູບທີ່ເປັນຄານາຍະຕະນະ ນັ້ນເປັນແນວໃດ?

ຄານະໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ກິ່ນທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກໍາລັງກະທົບ ຈັກກະທົບ ຫຼື ເພິ່ງກະທົບທີ່ຄານະໃດ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ຄານະແດ່ ຄານາຍະຕະນະແດ່ ຄານະທາດແດ່ ຄານິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນຄານາຍະຕະນະ

[໖໐໖] ຮູບທີ່ເປັນຄານາຍະຕະນະ ນັ້ນເປັນແນວໃດ?

ຄານະໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ຄານະໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກໍາລັງກະທົບ ຈັກກະທົບ ຫຼື ເພິ່ງກະທົບ ກິ່ນທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ຄານະແດ່ ຄານາຍະຕະນະແດ່ ຄານະທາດແດ່ ຄານິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າເປັນຄານາຍະຕະນະ

[໖໐໗] ຮູບທີ່ເປັນຄານາຍະຕະນະ ນັ້ນເປັນແນວໃດ?

ຄານະໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ຍ້ອນອາໄສຄານະໃດ ຄານະສໍາຜັດຜາຣົບກິ່ນເປັນອາລົມ ເຄີຍເກີດ ກໍາລັງເກີດ ຈັກເກີດ ຫຼືເພິ່ງເກີດ ฯລฯ ຍ້ອນອາໄສຄານະໃດ ເວທະນາທີ່ເກີດແຕ່ຄານະສໍາຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ຄານະວິນຍານຜາຣົບກິ່ນ ເຄີຍເກີດ ກໍາລັງເກີດ ຈັກເກີດ ຫຼືເພິ່ງເກີດ ฯລฯ ຍ້ອນອາໄສຄານະໃດ ຄານະສໍາຜັດມີກິ່ນເປັນອາລົມ ເຄີຍເກີດ ກໍາລັງເກີດ ຈັກເກີດ ຫຼືເພິ່ງເກີດ ฯລฯ ຍ້ອນອາໄສຄານະໃດ ເວທະນາທີ່ເກີດແຕ່ຄານະສໍາຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ຄານະວິນຍານ ມີກິ່ນເປັນອາລົມ ເຄີຍເກີດ ກໍາລັງເກີດ ຈັກເກີດ ຫຼື ເພິ່ງເກີດ ນີ້ຊື່ວ່າຄານະແດ່ ຄານາຍະຕະນະແດ່ ຄານະທາດແດ່ ຄານິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນຄານາຍະຕະນະ

## ຊິວຫາຍະຕະນະ

[໖໐໘] ຮູບທີ່ເປັນຊິວຫາຍະຕະນະ ນັ້ນເປັນແນວໃດ?

ຊິວຫາໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ ແຕ່ກະທົບໄດ້ ສັດນີ້ເຄີຍຊິມ ກໍາລັງຊິມ ຈັກຊິມ ຫຼື ເພິ່ງຊິມຣົດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ດ້ວຍຊິວຫາໃດ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ຊິວຫາແດ່ ຊິວຫາຍະຕະນະແດ່ ຊິວຫາທາດແດ່ ຊິວຫິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນຊິວຫາຍະຕະນະ

[໖໐໗] ຮູບທີ່ເປັນຊິວຫາຍະຕະນະ ນັ້ນເປັນແນວໃດ?

ຊິວຫາໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ຣົດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບ ຫຼື ເພິ່ງກະທົບທີ່ຊິວຫາໃດ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ຊິວຫາແດ່ ຊິວຫາຍະຕະນະແດ່ ຊິວຫາທາດແດ່ ຊິວຫິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນຊິວຫາຍະຕະນະ

[໖໑໐] ຮູບທີ່ເປັນຊິວຫາຍະຕະນະ ນັ້ນເປັນແນວໃດ?

ຊິວຫາໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ຊິວຫາໃດ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບ ຫຼື ເພິ່ງກະທົບ ຣົດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າຊິວຫາແດ່ ຊິວຫາຍະຕະນະແດ່ ຊິວຫາທາດແດ່ ຊິວຫິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນຊິວຫາຍະຕະນະ

[໖໑໑] ຮູບທີ່ເປັນຊິວຫາຍະຕະນະ ນັ້ນເປັນແນວໃດ?

ຊິວຫາໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ຍ້ອນອາໄສຊິວຫາໃດ ຊິວຫາສຳຜັດຜາຣົບຣົດເປັນອາລົມ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ฯລฯ ຍ້ອນອາໄສຊິວຫາໃດ ເວທະນາທີ່ເກີດແຕ່ຊິວຫາສຳຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ຊິວຫາວິນຍານ ຜາຣົບຣົດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ฯລฯ ຍ້ອນອາໄສຊິວຫາໃດ ຊິວຫາສຳຜັດມີຣົດເປັນອາລົມ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ฯລฯ ຍ້ອນອາໄສຊິວຫາໃດ ເວທະນາທີ່ເກີດແຕ່ຊິວຫາສຳຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ຊິວຫາວິນຍານມີຣົດເປັນອາລົມ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼືເພິ່ງເກີດ ນີ້ຊື່ວ່າຊິວຫາແດ່ ຊິວຫາຍະຕະນະແດ່ ຊິວຫາທາດແດ່ ຊິວຫິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າເປັນຊິວຫາຍະຕະນະ

## ກາຍາຍະຕະນະ

[໖໑໔] ຮູບທີ່ເປັນກາຍາຍະຕະນະ ນັ້ນເປັນແນວໃດ?

ກາຍໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ສັດນີ້ເຄີຍຖືກຕ້ອງ ກຳລັງຖືກຕ້ອງ ຈັກຖືກຕ້ອງ ຫຼືເພິ່ງຖືກຕ້ອງ ໂຜດຖັບພະທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ດ້ວຍກາຍໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າກາຍແດ່ ກາຍາຍະຕະ

ນະແດ່ ກາຍະທາດແດ່ ກາຍິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າເປັນກາຍາຍະຕະນະ

[໗໑໓] ຮູບທີ່ເປັນກາຍາຍະຕະນະນັ້ນເປັນແນວໃດ?

ກາຍໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໂຜດຖັບພະທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກໍາລັງກະທົບຈັກກະທົບ ຫຼື ເພິ່ງກະທົບທີ່ກາຍໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າກາຍແດ່ ກາຍາຍະຕະນະແດ່ ກາຍະທາດແດ່ ກາຍິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນກາຍາຍະຕະນະ

[໗໑໔] ຮູບທີ່ເປັນກາຍາຍະຕະນະນັ້ນເປັນແນວໃດ?

ກາຍໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ກາຍໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກໍາລັງກະທົບ ຈັກກະທົບ ຫຼື ເພິ່ງກະທົບທີ່ໂຜດຖັບພະທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ກາຍແດ່ ກາຍາຍະຕະນະແດ່ ກາຍະທາດແດ່ ກາຍິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນກາຍາຍະຕະນະ

[໗໑໕] ຮູບທີ່ເປັນກາຍາຍະຕະນະນັ້ນເປັນແນວໃດ?

ກາຍໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ນັບເນື່ອງໃນອັດຕະພາບ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ຍ້ອນອາໄສກາຍໃດ ກາຍສໍາຜັດຜາຣົບໂຜດຖັບພະເປັນອາລົມ ເຄີຍເກີດ ກໍາລັງເກີດ ຈັກເກີດ ຫຼືເພິ່ງເກີດ ฯລฯ ຍ້ອນອາໄສກາຍໃດ ເວທະນາທີ່ເກີດແຕ່ກາຍສໍາຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ກາຍວິນຍານ ຜາຣົບໂຜດຖັບພະເປັນອາລົມ ເຄີຍເກີດ ກໍາລັງເກີດ ຈັກເກີດ ຫຼື ເພິ່ງເກີດ ฯລฯ ຍ້ອນອາໄສກາຍໃດ ກາຍສໍາຜັດມີ ໂຜດຖັບພະເປັນອາລົມ ເຄີຍເກີດ ກໍາລັງເກີດ ຈັກເກີດ ຫຼືເພິ່ງເກີດ ฯລฯ ຍ້ອນອາໄສ ກາຍໃດ ເວທະນາທີ່ເກີດແຕ່ກາຍສໍາຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ກາຍວິນຍານ ມີໂຜດຖັບພະເປັນອາລົມ ເຄີຍເກີດ ກໍາລັງເກີດ ຈັກເກີດ ຫຼື ເພິ່ງເກີດ ນີ້ຊື່ວ່າກາຍແດ່ ກາຍາຍະຕະນະແດ່ ກາຍະທາດແດ່ ກາຍິນຊີແດ່ ໂລກແດ່ ທະວານແດ່ ມະຫາສະມຸດແດ່ ປັນທະຣະແດ່ ເຂດແດ່ ວັດຖຸແດ່ ຝັ່ງນີ້ແດ່ ເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນກາຍາຍະຕະນະ

## ຮູປາຍະຕະນະ

[໗໑໖] ຮູບທີ່ເປັນຮູປາຍະຕະນະ ນັ້ນເປັນແນວໃດ?

ຮູບໃດເປັນສີຕ່າງ ໆ ອາໄສມະຫາພູຕະຮູບ ໔ ທີ່ເຫັນໄດ້ ແລະກະທົບໄດ້ ໄດ້ແກ່ ສີຂຽວ

ສີເຫຼືອງ ສີແດງ ສີຂາວ ສີດຳ ສີທົ່ງສະບາດ ສີຄ້ຳ ສີຂຽວໃບໄມ້ ສີມ່ວງ ຍາວ ສັ້ນ ລະອຽດ ຫຍາບ ມົນ ຣີ ສີ່ຫຼ່ຽມ ຫົກຫຼ່ຽມ ແປດຫຼ່ຽມ ສິບຫົກຫຼ່ຽມ ລຸ່ມ ໂນນ ເງົາ ແດດ ແສງສະຫວ່າງ ມືດ ເມກ ໝອກ ຄວັນ ລະອອງ ແສງຈັນ ແສງອາທິດ ແສງດາວ ແສງແກ້ວ ແສງແກ້ວມະນີ ແສງຫອຍສັງ ແສງແກ້ວມຸກດາ ແສງແກ້ວໄພທູນ ແສງຄຳ ແສງເງິນ ຫຼື ຮູບແມ່ນອື່ນໃດທີ່ເປັນສີຕ່າງ ໆ ອາໄສມະຫາພູຕະຮູບ ໔ ທີ່ເຫັນໄດ້ແລະກະທົບໄດ້ ມີຢູ່ ສັດນີ້ເຄີຍເຫັນ ກຳລັງເຫັນ ຈັກເຫັນ ຫຼື ເພິ່ງເຫັນຮູບໃດ ທີ່ເຫັນໄດ້ແລະກະທົບໄດ້ດ້ວຍຈັກຂຸທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າຮູບແດ່ ຮູປາຍະຕະນະແດ່ ຮູບທາດແດ່ ຮູບນີ້ຊື່ວ່າ ເປັນຮູປາຍະຕະນະ

[໖໑໗] ຮູບທີ່ເປັນຮູປາຍະຕະນະ ນັ້ນເປັນແນວໃດ?

ຮູບໃດ ເປັນສີຕ່າງ ໆ ອາໄສມະຫາພູຕະຮູບ ໔ ເປັນຮູບທີ່ເຫັນໄດ້ແລະກະທົບໄດ້ ໄດ້ແກ່ ສີຂຽວ ສີເຫຼືອງ ສີແດງ ສີຂາວ ສີດຳ ສີທົ່ງສະບາດ ສີຄ້ຳ ສີຂຽວໃບໄມ້ ສີມ່ວງ ຍາວ ສັ້ນ ລະອຽດ ຫຍາບ ມົນ ຣີ ສີ່ຫຼ່ຽມ ຫົກຫຼ່ຽມ ແປດຫຼ່ຽມ ສິບຫົກຫຼ່ຽມ ລຸ່ມ ໂນນ ເງົາ ແດດ ແສງສະຫວ່າງ ມືດ ເມກ ໝອກ ຄວັນ ລະອອງ ແສງຈັນ ແສງອາທິດ ແສງດາວ ແສງແກ້ວ ແສງແກ້ວມະນີ ແສງຫອຍສັງ ແສງແກ້ວມຸກດາ ແສງແກ້ວໄພທູນ ແສງຄຳ ແສງເງິນ ຫຼື ຮູບແມ່ນອື່ນໃດ ທີ່ເປັນສີຕ່າງ ໆ ອາໄສມະຫາພູຕະຮູບ ໔ ເປັນຮູບທີ່ເຫັນໄດ້ແລະກະທົບໄດ້ມີຢູ່ ຈັກຂຸທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບ ຫຼື ເພິ່ງກະທົບທີ່ຮູບໃດເຊິ່ງເຫັນໄດ້ແລະກະທົບໄດ້ ນີ້ຊື່ວ່າ ຮູບແດ່ ຮູປາຍະຕະນະແດ່ ຮູບທາດແດ່ ຮູບນີ້ຊື່ວ່າ ເປັນຮູປາຍະຕະນະ

[໖໑໘] ຮູບທີ່ເປັນຮູປາຍະຕະນະ ນັ້ນເປັນແນວໃດ?

ຮູບໃດ ເປັນສີຕ່າງ ໆ ອາໄສມະຫາພູຕະຮູບ ໔ ເປັນຮູບທີ່ເຫັນໄດ້ແລະກະທົບໄດ້ ໄດ້ແກ່ ສີຂຽວ ສີເຫຼືອງ ສີແດງ ສີຂາວ ສີດຳ ສີທົ່ງສະບາດ ສີຄ້ຳ ສີຂຽວໃບໄມ້ ສີມ່ວງ ຍາວ ສັ້ນ ລະອຽດ ຫຍາບ ມົນ ຣີ ສີ່ຫຼ່ຽມ ຫົກຫຼ່ຽມ ແປດຫຼ່ຽມ ສິບຫົກຫຼ່ຽມ ລຸ່ມ ໂນນ ເງົາ ແດດ ແສງສະຫວ່າງ ມືດ ເມກ ໝອກ ຄວັນ ລະອອງ ແສງຈັນ ແສງອາທິດ ແສງດາວ ແສງແກ້ວ ແສງແກ້ວມະນີ ແສງຫອຍສັງ ແສງແກ້ວມຸກດາ ແສງແກ້ວໄພທູນ ແສງຄຳ ແສງເງິນ ຫຼື ຮູບແມ່ນອື່ນ ທີ່ເປັນສີຕ່າງ ໆ ອາໄສມະຫາພູຕະຮູບ ໔ ເປັນຮູບທີ່ເຫັນໄດ້ແລະກະທົບໄດ້ ມີຢູ່ ຮູບໃດທີ່ເຫັນໄດ້ແລະກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບຫຼືເພິ່ງກະທົບທີ່ຈັກຂຸໃດເຊິ່ງເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າຮູບແດ່ ຮູປາຍະຕະນະແດ່ ຮູບທາດແດ່ ຮູບນີ້ຊື່ວ່າ ເປັນຮູປາຍະຕະນະ

[໖໑໙] ຮູບທີ່ເປັນຮູປາຍະຕະນະ ນັ້ນເປັນແນວໃດ?

ຮູບໃດທີ່ເປັນສີຕ່າງ ໆ ອາໄສມະຫາພູຕະຮູບ ໔ ເປັນຮູບທີ່ເຫັນໄດ້ ແລະກະທົບໄດ້ ໄດ້ແກ່ ສີຂຽວ ສີເຫຼືອງ ສີແດງ ສີຂາວ ສີດຳ ສີທົ່ງສະບາດ ສີຄ້ຳ ສີຂຽວໃບໄມ້ ສີມ່ວງ ຍາວ ສັ້ນ ລະອຽດ ຫຍາບ ມົນ ຣີ ສີ່ຫຼ່ຽມ ຫົກຫຼ່ຽມ ແປດຫຼ່ຽມ ສິບຫົກຫຼ່ຽມ ລຸ່ມ ໂນນ ເງົາ ແດດ ແສງສະຫວ່າງ ມືດ ເມກ ໝອກ ຄວັນ ລະອອງ ແສງຈັນ ແສງອາທິດ ແສງດາວ ແສງແກ້ວ ແສງ

ແກ້ວມະນີ ແສງຫອຍສັງ ແສງແກ້ວມຸກດາ ແສງແກ້ວໄພທູນ ແສງຄຳ ແສງເງິນ ຫຼືຮູບແມ່ນອື່ນໃດທີ່ເປັນສີຕ່າງ ໆ ເຊິ່ງອາໄສມະຫາພູຕະຮູບ ໔ ເປັນຮູບທີ່ເຫັນໄດ້ແລະກະທົບໄດ້ ມີຢູ່ ຍ້ອນຜາຣົບຮູບໃດ ຈັກຂຸສຳຜັດອາໄສຈັກຂຸ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼືເພິ່ງເກີດ ฯລฯ ຍ້ອນຜາຣົບຮູບໃດ ເວທະນາທີ່ເກີດແຕ່ຈັກຂຸສຳຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ຈັກຂຸວິນຍານອາໄສຈັກຂຸ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼືເພິ່ງເກີດ ฯລฯ ຈັກຂຸສຳຜັດ ມີຮູບໃດເປັນອາລົມ ອາໄສຈັກຂຸ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼືເພິ່ງເກີດ ฯລฯ ເວທະນາທີ່ເກີດແຕ່ຈັກຂຸສຳຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ຈັກຂຸວິນຍານມີຮູບໃດເປັນອາລົມ ອາໄສຈັກຂຸເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ນີ້ຊື່ວ່າຮູບແດ່ ຮູປາຍະຕະນະແດ່ ຮູບທາດແດ່ ຮູບນີ້ຊື່ວ່າ ເປັນຮູປາຍະຕະນະ

## ສັດທາຍະຕະນະ

[໖໒໐] ຮູບທີ່ເປັນສັດທາຍະຕະນະ ນັ້ນເປັນແນວໃດ?

ສຽງໃດ ອາໄສມະຫາພູຕະຮູບ ໔ ເປັນສຽງທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໄດ້ແກ່ ສຽງ ກອງສຽງກອງຕະໂພນ ສຽງຫອຍສັງ ສຽງກອງບັນເດາະ ສຽງຂັບຮ້ອງ ສຽງເສບ ສຽງກັບ ສຽງຕົບມືສຽງຮ້ອງຂອງສັດ ສຽງກະທົບກັນແຫ່ງທາດ ສຽງລົມ ສຽງນ້ຳ ສຽງມະນຸດ ສຽງອະມະນຸດ ຫຼື ສຽງແມ່ນອື່ນໃດອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ແຕ່ ກະທົບໄດ້ ມີຢູ່ ສັດນີ້ ເຄີຍຟັງ ກຳລັງຟັງຈັກຟັງ ຫຼື ເພິ່ງຟັງສຽງໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ດ້ວຍໂສຕະປະສາດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ນີ້ຊື່ວ່າສັດທະແດ່ ສັດທາຍະຕະນະແດ່ ສັດທະທາດແດ່ ຮູບນີ້ຊື່ວ່າ ເປັນສັດທາຍະຕະນະ

[໖໒໑] ຮູບທີ່ເປັນສັດທາຍະຕະນະ ນັ້ນເປັນແນວໃດ?

ສຽງໃດ ອາໄສມະຫາພູຕະຮູບ ໔ ເປັນສຽງທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໄດ້ແກ່ ສຽງ ກອງສຽງກອງຕະໂພນ ສຽງຫອຍສັງ ສຽງກອງບັນເດາະ ສຽງຂັບຮ້ອງ ສຽງເສບ ສຽງກັບ ສຽງຕົບມືສຽງຮ້ອງຂອງສັດ ສຽງກະທົບກັນຂອງທາດ ສຽງລົມ ສຽງນ້ຳ ສຽງມະນຸດ ສຽງອະມະນຸດ ຫຼືສຽງແມ່ນອື່ນໃດອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ມີຢູ່ ໂສຕະປະສາດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບ ຫຼື ເພິ່ງກະທົບທີ່ສຽງໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ນີ້ຊື່ວ່າສັດທະແດ່ ສັດທາຍະຕະນະແດ່ ສັດທະທາດແດ່ຮູບນີ້ຊື່ວ່າ ເປັນສັດທາຍະຕະນະ

[໖໒໒] ຮູບທີ່ເປັນສັດທາຍະຕະນະ ນັ້ນເປັນແນວໃດ?

ສຽງໃດ ອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໄດ້ແກ່ ສຽງກອງ ສຽງກອງຕະໂພນ ສຽງຫອຍສັງ ສຽງກອງບັນເດາະ ສຽງຂັບຮ້ອງ ສຽງເສບ ສຽງກັບ ສຽງຕົບມືສຽງຮ້ອງຂອງສັດ ສຽງກະທົບກັນຂອງທາດ ສຽງລົມ ສຽງນ້ຳ ສຽງມະນຸດ ສຽງອະມະນຸດ ຫຼືສຽງແມ່ນອື່ນໃດອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ມີຢູ່ ສຽງໃດທີ່ເຫັນບໍ່ໄດ້ແຕ່

ກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບ ຫຼືເພິ່ງກະທົບ ທີ່ໂສຕະປະສາດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າສັດທະແດ່ ສັດທາຍະຕະນະແດ່ ສັດທະທາດແດ່ ຮູບນີ້ຊື່ວ່າ ເປັນສັດທາຍະຕະນະ

[໗໘໓] ຮູບທີ່ເປັນສັດທາຍະຕະນະ ນັ້ນເປັນແນວໃດ?

ສຽງໃດ ອາໄສມະຫາພູຕະຮູບ ໔ ເປັນສຽງທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໄດ້ແກ່ ສຽງກອງ ສຽງກອງຕະໂພນ ສຽງຫອຍສັງ ສຽງກອງບັນເດາະ ສຽງຂັບຮ້ອງ ສຽງເສບ ສຽງກັບ ສຽງຕົບມື ສຽງຮ້ອງຂອງສັດ ສຽງກະທົບກັນຂອງທາດ ສຽງລົມ ສຽງນ້ຳ ສຽງມະນຸດ ສຽງອະມະນຸດ ຫຼື ສຽງແມ່ນອື່ນໃດອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ມີຢູ່ ຍ້ອນຜາຣົບສຽງໃດ ໂສຕະສຳຜັດອາໄສໂສຕະປະສາດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ຯລຯ ຍ້ອນຜາຣົບສຽງໃດ ເວທະນາທີ່ເກີດແຕ່ໂສຕະສຳຜັດ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ໂສຕະວິນຍານອາໄສໂສຕະປະສາດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ຯລຯ ໂສຕະສຳຜັດມີສຽງໃດເປັນອາລົມ ອາໄສໂສຕະປະສາດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ຯລຯ ເວທະນາ ທີ່ເກີດແຕ່ໂສຕະສຳຜັດ ຯລຯ ສັນຍາ ຯລຯ ເຈຕະນາ ຯລຯ ໂສຕະວິນຍານມີສຽງໃດເປັນອາລົມ ອາໄສໂສຕະປະສາດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ນີ້ຊື່ວ່າສັດທະແດ່ ສັດທາຍະຕະນະແດ່ ສັດທະທາດແດ່ ຮູບນີ້ຊື່ວ່າເປັນ ສັດທາຍະຕະນະ

## ຄັນທາຍະຕະນະ

[໗໘໔] ຮູບທີ່ເປັນຄັນທາຍະຕະນະ ນັ້ນເປັນແນວໃດ?

ກິ່ນໃດ ອາໄສມະຫາພູຕະຮູບ ໔ ເປັນກິ່ນທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໄດ້ແກ່ ກິ່ນຮາກໄມ້ ກິ່ນແກ່ນໄມ້ ກິ່ນເປືອກໄມ້ ກິ່ນໃບໄມ້ ກິ່ນດອກໄມ້ ກິ່ນໝາກໄມ້ ກິ່ນບູດ ກິ່ນເນົ່າ ກິ່ນຫອມ ກິ່ນເໝັນ ຫຼື ກິ່ນແມ່ນອື່ນໃດເຊິ່ງອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ມີຢູ່ ສັດນີ້ເຄີຍດົມ ກຳລັງດົມ ຈັກດົມ ຫຼື ເພິ່ງດົມກິ່ນໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ດ້ວຍຄານະປະສາດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ຄັນທະແດ່ ຄັນທາຍະຕະນະແດ່ ຄັນທະທາດແດ່ ຮູບນີ້ຊື່ວ່າ ເປັນຄັນທາຍະຕະນະ

[໗໘໕] ຮູບທີ່ເປັນຄັນທາຍະຕະນະ ນັ້ນເປັນແນວໃດ?

ກິ່ນໃດ ອາໄສມະຫາພູຕະຮູບ ໔ ເປັນກິ່ນທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໄດ້ແກ່ກິ່ນຮາກໄມ້ ກິ່ນແກ່ນໄມ້ ກິ່ນເປືອກໄມ້ ກິ່ນໃບໄມ້ ກິ່ນດອກໄມ້ ກິ່ນໝາກໄມ້ ກິ່ນບູດ ກິ່ນເນົ່າ ກິ່ນຫອມ ກິ່ນເໝັນ ຫຼື ກິ່ນແມ່ນອື່ນໃດເຊິ່ງອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ມີຢູ່ ຄານະປະສາດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບ ຫຼືເພິ່ງກະທົບທີ່ກິ່ນໃດ

ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ຄັນທະແດ່ ຄັນທາຍະຕະນະແດ່ ຄັນທະທາດແດ່ ຮູບນີ້ຊື່ວ່າ ເປັນຄັນທາຍະຕະນະ

[໖໔໖] ຮູບທີ່ເປັນຄັນທາຍະຕະນະ ນັ້ນເປັນແນວໃດ?

ກິ່ນໃດ ອາໄສມະຫາພູຕະຮູບ ໔ ເປັນກິ່ນທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໄດ້ແກ່ກິ່ນ ຮາກໄມ້ ກິ່ນແກ່ນໄມ້ ກິ່ນເປືອກໄມ້ ກິ່ນໃບໄມ້ ກິ່ນດອກໄມ້ ກິ່ນໝາກໄມ້ ກິ່ນບູດ ກິ່ນເນົ່າ ກິ່ນຫອມ ກິ່ນເໝັນ ຫຼື ກິ່ນແມ່ນອື່ນໃດ ເຊິ່ງອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ມີຢູ່ ກິ່ນໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບ ຫຼື ເພິ່ງກະທົບທີ່ຄານະປະສາດ ເຊິ່ງເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ຄັນທະແດ່ ຄັນທາຍະຕະນະແດ່ ຄັນທະທາດແດ່ ຮູບນີ້ຊື່ວ່າ ເປັນຄັນທາຍະຕະນະ

[໖໔໗] ຮູບທີ່ເປັນຄັນທາຍະຕະນະ ນັ້ນເປັນແນວໃດ?

ກິ່ນໃດ ອາໄສມະຫາພູຕະຮູບ ໔ ເປັນກິ່ນທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໄດ້ແກ່ ກິ່ນ ຮາກໄມ້ ກິ່ນແກ່ນໄມ້ ກິ່ນເປືອກໄມ້ ກິ່ນໃບໄມ້ ກິ່ນດອກໄມ້ ກິ່ນໝາກໄມ້ ກິ່ນບູດ ກິ່ນເນົ່າ ກິ່ນຫອມ ກິ່ນເໝັນ ຫຼື ກິ່ນແມ່ນອື່ນໃດ ອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ມີຢູ່ ຍ້ອນຜາຣົບກິ່ນໃດ ຄານະສຳຜັດອາໄສຄານະປະສາດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ฯລฯ ຍ້ອນຜາຣົບກິ່ນໃດ ເວທະນາທີ່ເກີດແຕ່ຄານະສຳຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ຄານະວິນຍານອາໄສຄານະປະສາດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ฯລฯ ຄານະສຳຜັດ ມີກິ່ນໃດເປັນອາລົມ ອາໄສຄານະປະສາດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ฯລฯ ເວທະນາທີ່ເກີດແຕ່ຄານະສຳຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ຄານະວິນຍານມີກິ່ນໃດເປັນອາລົມ ອາໄສຄານະປະສາດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼືເພິ່ງເກີດ ນີ້ຊື່ວ່າ ຄັນທະແດ່ ຄັນທາຍະຕະນະແດ່ ຄັນທະທາດແດ່ ຮູບນີ້ຊື່ວ່າ ເປັນຄັນທາຍະຕະນະ

## ຣະສາຍະຕະນະ

[໖໔໘] ຮູບທີ່ເປັນຣະສາຍະຕະນະ ນັ້ນເປັນແນວໃດ?

ຣົດໃດ ອາໄສມະຫາພູຕະຮູບ ໔ ເປັນຣົດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໄດ້ແກ່ ຣົດຮາກໄມ້ ຣົດລຳຕົ້ນ ຣົດເປືອກໄມ້ ຣົດໃບໄມ້ ຣົດດອກໄມ້ ຣົດໝາກໄມ້ ຣົດສົ້ມ ຫວານ ຂົມ ເຜັດ ເຄັມ ຂື່ນ ເຝື່ອນ ຝາດ ແຊບ ບໍ່ແຊບ ຫຼື ຣົດແມ່ນອື່ນໃດ ອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ມີຢູ່ ສັດນີ້ເຄີຍຊີມ ກຳລັງຊີມ ຈັກຊີມ ຫຼື ເພິ່ງຊີມຣົດໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ດ້ວຍຊິວຫາປະສາດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າ ຣົດແດ່ ຣະສາຍະຕະນະແດ່ ຣະສະທາດແດ່ ຮູບນີ້ຊື່ວ່າ ເປັນຣະສາຍະຕະນະ

[໖໔໙] ຮູບທີ່ເປັນຣະສາຍະຕະນະ ນັ້ນເປັນແນວໃດ?

ຣົດໃດ ອາໄສມະຫາພູຕະຮູບ ໔ ເປັນຣົດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໄດ້ແກ່ ຣົດຮາກໄມ້ ຣົດລຳຕົ້ນ ຣົດເປືອກໄມ້ ຣົດໃບໄມ້ ຣົດດອກໄມ້ ຣົດໝາກໄມ້ ຣົດສົ້ມ ຫວານ ຂົມ ເຜັດ ເຄັມ ຂື່ນ ເຝື່ອນ ຝາດ ແຊບ ບໍ່ແຊບ ຫຼືຣົດແມ່ນອື່ນໃດ ອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ ແຕ່ກະທົບໄດ້ ມີຢູ່ ຊິວຫາປະສາດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບ ຫຼືເພິ່ງກະທົບທີ່ຣົດໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າຣົດແດ່ ຣະສາຍະຕະນະແດ່ ຣະສະທາດແດ່ ຮູບນີ້ຊື່ວ່າເປັນຣະສາຍະຕະນະ

[໖໕໐] ຮູບທີ່ເປັນຣະສາຍະຕະນະ ນັ້ນເປັນແນວໃດ?

ຣົດໃດ ອາໄສມະຫາພູຕະຮູບ ໔ ເປັນຣົດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໄດ້ແກ່ ຣົດຮາກໄມ້ ຣົດລຳຕົ້ນ ຣົດເປືອກໄມ້ ຣົດໃບໄມ້ ຣົດດອກໄມ້ ຣົດໝາກໄມ້ ຣົດສົ້ມ ຫວານ ຂົມ ເຜັດ ເຄັມ ຂື່ນ ເຝື່ອນ ຝາດ ແຊບ ບໍ່ແຊບ ຫຼືຣົດແມ່ນອື່ນໃດອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ມີຢູ່ ຣົດໃດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເຄີຍກະທົບ ກຳລັງກະທົບ ຈັກກະທົບ ຫຼືເພິ່ງກະທົບທີ່ຊິວຫາປະສາດເຊິ່ງເຫັນບໍ່ໄດ້ແຕ່ກະທົບໄດ້ ນີ້ຊື່ວ່າຣົດແດ່ ຣະສາຍະຕະນະແດ່ ຣະສະທາດແດ່ ຮູບນີ້ຊື່ວ່າ ເປັນຣະສາຍະຕະນະ

[໖໕໑] ຮູບທີ່ເປັນຣະສາຍະຕະນະ ນັ້ນເປັນແນວໃດ?

ຣົດໃດ ອາໄສມະຫາພູຕະຮູບ ໔ ເປັນຣົດທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ໄດ້ແກ່ ຣົດຮາກໄມ້ ຣົດລຳຕົ້ນ ຣົດເປືອກໄມ້ ຣົດໃບໄມ້ ຣົດດອກໄມ້ ຣົດໝາກໄມ້ ຣົດສົ້ມ ຫວານ ຂົມ ເຜັດ ເຄັມ ຂື່ນ ເຝື່ອນ ຝາດ ແຊບ ບໍ່ແຊບ ຫຼື ຣົດແມ່ນອື່ນໃດເຊິ່ງອາໄສມະຫາພູຕະຮູບ ໔ ທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ມີຢູ່ ຍ້ອນຜາຣົບຣົດໃດ ຊິວຫາສຳຜັດອາໄສຊິວຫາປະສາດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ฯລฯ ຍ້ອນຜາຣົບຣົດໃດ ເວທະນາທີ່ເກີດແຕ່ຊິວຫາສຳຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ຊິວຫາວິນຍານ ອາໄສຊິວຫາປະສາດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ฯລฯ ຊິວຫາສຳຜັດມີຣົດໃດເປັນອາລົມ ອາໄສຊິວຫາປະສາດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼືເພິ່ງເກີດ ฯລฯ ເວທະນາທີ່ເກີດແຕ່ຊິວຫາສຳຜັດ ฯລฯ ສັນຍາ ฯລฯ ເຈຕະນາ ฯລฯ ຊິວຫາວິນຍານ ມີຣົດໃດເປັນອາລົມ ອາໄສຊິວຫາປະສາດ ເຄີຍເກີດ ກຳລັງເກີດ ຈັກເກີດ ຫຼື ເພິ່ງເກີດ ນີ້ຊື່ວ່າ ຣົດແດ່ ຣະສາຍະຕະນະແດ່ ຣະສະທາດແດ່ ຮູບນີ້ຊື່ວ່າ ເປັນຣະສາຍະຕະນະ

## ອິດຖິນຊີ

[໖໕໔] ຮູບທີ່ເປັນອິດຖິນຊີ ນັ້ນເປັນແນວໃດ?

ຊວດຊົງແມ່ຍິງ ເຄື່ອງໝາຍປະຈຳເພດແມ່ຍິງ ກິຣິຍາແມ່ຍິງ ອາການແມ່ຍິງ ສະພາບແມ່ຍິງ ພາວະແມ່ຍິງ ຂອງສະຕີ ຮູບນີ້ຊື່ວ່າເປັນອິດຖິນຊີ

## ປຸຣິສິນຊີ

[໖໓໓] ຮູບທີ່ເປັນປຸຣິສິນຊີ ນັ້ນເປັນແນວໃດ?

ຊວດຊົງຊາຍ ເຄື່ອງໝາຍປະຈຳເພດຊາຍ ກິຣິຍາຊາຍ ອາການຊາຍ ສະພາບ ຊາຍ ພາວະຊາຍ ຂອງບຸຣຸດ ຮູບນີ້ຊື່ວ່າ ເປັນປຸຣິສິນຊີ

## ຊີວິຕິນຊີ

[໖໓໔] ຮູບທີ່ເປັນຊີວິຕິນຊີ ນັ້ນເປັນແນວໃດ?

ອາຍຸ ຄວາມດຳຣົງຢູ່ ຄວາມເປັນໄປ ກິຣິຍາທີ່ໃຫ້ເປັນໄປ ອາການທີ່ສືບເນື່ອງກັນ ຄວາມດຳເນີນໄປ ຄວາມຫຼໍ່ລ້ຽງ ຊີວິດ ຊີວິຕິນຊີແຫ່ງສະພາວະທຳທີ່ເປັນຮູບເຫຼົ່ານັ້ນ ຮູບນີ້ຊື່ວ່າ ເປັນຊີວິຕິນຊີ

## ກາຍວິນຍັດ

[໖໓໕] ຮູບທີ່ເປັນກາຍວິນຍັດ ນັ້ນເປັນແນວໃດ?

ຄວາມເຂັ້ມແຂງ ກິຣິຍາທີ່ເຂັ້ມແຂງດ້ວຍດີ ພາວະທີ່ເຂັ້ມແຂງດ້ວຍດີ ການສະແດງໃຫ້ຮູ້ຄວາມໝາຍ ກິຣິຍາທີ່ສະແດງໃຫ້ຮູ້ຄວາມໝາຍ ພາວະທີ່ສະແດງໃຫ້ຮູ້ຄວາມໝາຍແຫ່ງກາຍຂອງບຸກຄົນຜູ້ມີຈິດເປັນກຸສົນ ມີຈິດເປັນອະກຸສົນ ມີຈິດເປັນອັບພະຍາກະຕະ ກ້າວໄປຢູ່ ຖອຍກັບຢູ່ ແລເບິ່ງຢູ່ ຫຼຽວເບິ່ງຢູ່ ຄູ້ເຂົ້າຢູ່ ຫຼື ຢຽດອອກຢູ່ ຮູບນີ້ຊື່ວ່າ ເປັນກາຍວິນຍັດ

## ວະຈີວິນຍັດຕິ

[໖໓໖] ຮູບທີ່ເປັນວະຈີວິນຍັດ ນັ້ນເປັນແນວໃດ?

ການເວົ້າ ການເປ່ງວາຈາ ການເຈຣະຈາ ການກ່າວ ການປ່າວຮ້ອງ ການໂຄສະນາ ວາຈາ ວະຈີເພດ ແຫ່ງບຸກຄົນຜູ້ມີຈິດເປັນກຸສົນ ມີຈິດເປັນອະກຸສົນ ມີຈິດເປັນອັບພະຍາກະຕະ ນີ້ຮຽກວ່າ ວາຈາ ການສະແດງໃຫ້ຮູ້ຄວາມໝາຍ ກິຣິຍາທີ່ສະແດງໃຫ້ຮູ້ຄວາມໝາຍ ພາວະທີ່ສະແດງໃຫ້ຮູ້ຄວາມໝາຍດ້ວຍວາຈານັ້ນ ຮູບນີ້ຊື່ວ່າ ເປັນວະຈີວິນຍັດ

## ອາກາສະທາດ

[໖໓໗] ຮູບທີ່ເປັນອາກາສະທາດ ນັ້ນເປັນແນວໃດ?

ອາກາດ ທຳມະຊາດທີ່ນັບວ່າອາກາດ ຄວາມວ່າງເປົ່າ ທຳມະຊາດທີ່ນັບວ່າຄວາມວ່າງເປົ່າ ປ່ອງວ່າງ ທຳມະຊາດທີ່ນັບວ່າປ່ອງວ່າງ ເຊິ່ງມະຫາພູຕະຮູບ ໔ ຖືກຕ້ອງບໍ່ໄດ້ ຮູບນີ້ຊື່ວ່າ ເປັນອາກາສະທາດ

## ລະຫຸຕາຣູບ

[໖໓໗] ຣູບທີ່ເປັນລະຫຸຕາຣູບ ນັ້ນເປັນແນວໃດ?

ຄວາມເບົາ ຄວາມວ່ອງໄວ ຄວາມບໍ່ເຊື່ອງຊ້າ ຄວາມບໍ່ໜັກແຫ່ງຣູບ ຣູບນີ້ຊື່ວ່າ ເປັນລະຫຸຕາຣູບ

## ມຸທຸຕາຣູບ

[໖໓໙] ຣູບທີ່ເປັນມຸທຸຕາຣູບ ນັ້ນເປັນແນວໃດ?

ຄວາມອ່ອນ ພາວະທີ່ອ່ອນ ຄວາມບໍ່ແຂງ ຄວາມບໍ່ກະດ້າງແຫ່ງຣູບ ຣູບນີ້ຊື່ວ່າ ເປັນມຸທຸຕາຣູບ

## ກຳມັນຍະຕາຣູບ

[໖໔໐] ຣູບທີ່ເປັນກຳມັນຍະຕາຣູບ ນັ້ນເປັນແນວໃດ?

ຄວາມຄວນແກ່ວຽກງານ ກິຣິຍາທີ່ຄວນແກ່ວຽກງານ ພາວະທີ່ຄວນແກ່ວຽກງານແຫ່ງຣູບ ຣູບນີ້ຊື່ວ່າ ເປັນກຳມັນຍະຕາຣູບ

## ອຸປະຈະຍະຣູບ

[໖໔໑] ຣູບທີ່ເປັນອຸປະຈະຍະຣູບ ນັ້ນເປັນແນວໃດ?

ຄວາມເກີດທຳອິດແຫ່ງອາຍະຕະນະ ນັ້ນເປັນຄວາມເກີດຂຶ້ນແຫ່ງຣູບ ຣູບນີ້ຊື່ວ່າເປັນອຸປະຈະຍະຣູບ

## ສັນຕະຕິຣູບ

[໖໔໒] ຣູບທີ່ເປັນສັນຕະຕິຣູບ ນັ້ນເປັນແນວໃດ?

ຄວາມຈະເລີນແຫ່ງຣູບ ນັ້ນເປັນຄວາມສືບຕໍ່ແຫ່ງຣູບ ຣູບນີ້ຊື່ວ່າ ເປັນສັນຕະຕິຣູບ

## ຊະຣະຕາຣູບ

[໖໔໓] ຣູບທີ່ເປັນຊະຣະຕາຣູບ ນັ້ນເປັນແນວໃດ?

ຄວາມຊະຣາ ຄວາມຊຸດໂຊມ ຄວາມມີແຂ້ວຫຼ່ອນ ຄວາມມີຜົມຫງອກ ຄວາມມີໜັງຫ່ຽວ ຄວາມເສື່ອມອາຍຸ ຄວາມຫງ່ອມແຫ່ງອິນຊີແຫ່ງຣູບ ຣູບນີ້ຊື່ວ່າເປັນຊະຣະຕາຣູບ

ອິດຖິນຊີ ປຸຣິສິນຊີ ແລະຊີວິຕິນຊີ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ອາກາສະທາດ ອາໂປທາດ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານທີ່ກຳປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖືນີ້ຊື່ວ່າເປັນຮູບໄກ

[໗໑໗] ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືເປັນຮູບໃກ້ ນັ້ນເປັນແນວໃດ?

ຈັກຂາຍະຕະນະ ຯລຯ ກາຍາຍະຕະນະ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ຣູປາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະທີ່ກຳປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖືນີ້ຊື່ວ່າເປັນຮູບໃກ້

[໗໘໐] ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືເປັນຮູບໄກ ນັ້ນເປັນແນວໃດ?

ກາຍວິນຍັດ ວະຈີວິນຍັດຕິ ລະຫຸຕາຮູບ ມຸທຸຕາຮູບ ກຳມັນຍະຕາຮູບ ຊະຣະຕາຮູບ ແລະອະນິດຈະຕາຮູບ ຫຼືຮູບແມ່ນອື່ນມີຢູ່ ໄດ້ແກ່ ອາກາສະທາດ ອາໂປທາດ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານທີ່ກຳບໍ່ໄດ້ປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືນີ້ຊື່ວ່າເປັນຮູບໄກ

[໗໘໑] ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືເປັນຮູບໃກ້ ນັ້ນເປັນແນວໃດ?

ສັດທາຍະຕະນະ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ຣູປາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະທີ່ກຳບໍ່ໄດ້ປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືນີ້ຊື່ວ່າເປັນຮູບໃກ້

## ອຸປາທິນນຸປາທານິຍະສະນິທັດສະນະຈະຕຸກກະ

[໗໘໘] ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖືແລະເປັນອາລົມຂອງອຸປາທານ ເປັນຮູບທີ່ເຫັນໄດ້ນັ້ນເປັນແນວໃດ?

ຣູປາຍະຕະນະທີ່ກຳປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖືແລະເປັນອາລົມຂອງອຸປາທານນີ້ຊື່ວ່າເຫັນໄດ້

[໗໘໙] ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖືແລະເປັນອາລົມຂອງອຸປາທານເປັນຮູບທີ່ເຫັນບໍ່ໄດ້ ນັ້ນເປັນແນວໃດ?

ຈັກຂາຍະຕະນະ ຯລຯ ກາຍາຍະຕະນະ ອິດຖິນຊີ ປຸຣິສິນຊີ ແລະຊີວິຕິນຊີ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ຄັນທາຍະຕະນະ ຣະສາຍະຕະນະ ໂຜດຖັບພາຍະຕະນະ ອາກາສະທາດ ອາໂປທາດ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານທີ່ກຳປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານນີ້ຊື່ວ່າເຫັນບໍ່ໄດ້

[໙໔໔] ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານເປັນຮູບທີ່ເຫັນໄດ້ ນັ້ນເປັນແນວໃດ?

ຮູປາຍະຕະນະທີ່ກຳບໍ່ໄດ້ປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານນີ້ຊື່ວ່າເຫັນໄດ້

[໙໔໕] ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານເປັນຮູບທີ່ເຫັນບໍ່ໄດ້ ນັ້ນເປັນແນວໃດ?

ສັດທາຍະຕະນະ ກາຍວິນຍັດ ວະຈີວິນຍັດຕິ ລະຫຸຕາຮູບ ມຸທຸຕາຮູບ ກຳມັນຍະຕາຮູບ ຊະຣະຕາຮູບ ແລະອະນິດຈະຕາຮູບ ຫຼື ຮູບແມ່ນອື່ນມີຢູ່ ໄດ້ແກ່ ຄັນທາຍະຕະນະ ຣະສາຍະຕະນະ ໂຜດຖັບພາຍະຕະນະ ອາກາສະທາດ ອາໂປທາດ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານທີ່ກຳບໍ່ໄດ້ປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານນີ້ຊື່ວ່າເຫັນບໍ່ໄດ້

## ອຸປາທິນນຸປາທານິຍະສັບປະຕິຄະຈະຕຸກກະ

[໙໔໖] ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖືແລະເປັນອາລົມຂອງອຸປາທານເປັນຮູບທີ່ກະທົບໄດ້ ນັ້ນເປັນແນວໃດ?

ຈັກຂາຍະຕະນະ ຯລຯ ກາຍາຍະຕະນະ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ຮູປາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະທີ່ກຳປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານນີ້ຊື່ວ່າ ກະທົບໄດ້

[໙໔໗] ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖືແລະເປັນອາລົມຂອງອຸປາທານເປັນຮູບທີ່ກະທົບບໍ່ໄດ້ ນັ້ນເປັນແນວໃດ?

ອິດຖິນຊີ ປຸຣິສິນຊີ ແລະຊີວິຕິນຊີ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ອາກາສະທາດ ອາໂປທາດ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານທີ່ກຳປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານນີ້ຊື່ວ່າກະທົບບໍ່ໄດ້

[໙໔໘] ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານເປັນຮູບທີ່ກະທົບໄດ້ ນັ້ນເປັນແນວໃດ?

ສັດທາຍະຕະນະ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ຮູປາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະທີ່ກຳບໍ່ໄດ້ປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານນີ້ຊື່ວ່າ ກະທົບໄດ້

[໙໔໙] ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານເປັນຮູບທີ່ກະທົບບໍ່ໄດ້ ນັ້ນເປັນແນວໃດ?

ກາຍວິນຍັດ ວະຈີວິນຍັດຕິ ລະຫຸຕາຮູບ ມຸທຸຕາຮູບ ກຳມັນຍະຕາຮູບ ຊະຣະຕາຮູບ ແລະອະນິດຈະຕາຮູບ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ອາກາສະທາດ ອາໂປທາດ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານທີ່ກຳບໍ່ໄດ້ປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານນີ້ຊື່ວ່າ ກະທົບບໍ່ໄດ້

## ອຸປາທິນນຸປາທານິຍະມະຫາພູຕະຈະຕຸກກະ

[໙໓໐] ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານເປັນມະຫາພູຕະຮູບ ນັ້ນເປັນແນວໃດ?

ໂຜດຖັບພາຍະຕະນະ ແລະອາໂປທາດທີ່ກຳປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານນີ້ຊື່ວ່າ ເປັນມະຫາພູຕະຮູບ

[໙໓໑] ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານບໍ່ເປັນມະຫາພູຕະຮູບນັ້ນເປັນແນວໃດ?

ຈັກຂາຍະຕະນະ ຯລຯ ກາຍາຍະຕະນະ ອິດຖິນຊີ ປຸຣິສິນຊີ ແລະຊີວິຕິນຊີ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ຮູປາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ອາກາສະທາດ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານທີ່ກຳປຸງແຕ່ງຂຶ້ນຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານນີ້ຊື່ວ່າ ບໍ່ເປັນມະຫາພູຕະຮູບ

[໙໓໔] ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານເປັນມະຫາພູຕະຮູບ ນັ້ນເປັນແນວໃດ?

ໂຜດຖັບພາຍະຕະນະ ແລະອາໂປທາດທີ່ກຳບໍ່ໄດ້ປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານນີ້ຊື່ວ່າ ເປັນມະຫາພູຕະຮູບ

[໙໓໓] ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານບໍ່ເປັນມະຫາພູຕະຮູບ ນັ້ນເປັນແນວໃດ?

ສັດທາຍະຕະນະ ກາຍວິນຍັດ ວະຈີວິນຍັດຕິ ລະຫຸຕາຮູບ ມຸທຸຕາຮູບ ກຳມັນຍະຕາຮູບ ຊະຣະຕາຮູບ ແລະອະນິດຈະຕາຮູບ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ຮູປາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ອາກາສະທາດ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານທີ່ກຳບໍ່ໄດ້ປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານນີ້ຊື່ວ່າ ບໍ່ເປັນມະຫາພູຕະຮູບ

## ອຸປາທິນນຸປາທານິຍະໂອລາຣິກະຈະຕຸກກະ

[໙໓໔] ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານເປັນຮູບຫຍາບ ນັ້ນເປັນແນວໃດ?

ຈັກຂາຍະຕະນະ ໗ລ໗ ກາຍາຍະຕະນະ ຫຼື ຮູບແມ່ນອື່ນມີຢູ່ ໄດ້ແກ່ຮູປາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະທີ່ກຳປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານນີ້ຊື່ວ່າເປັນຮູບຫຍາບ

[໙໓໕] ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານເປັນຮູບລະອຽດນັ້ນ ເປັນແນວໃດ?

ອິດຖິນຊີ ປຸຣິສິນຊີ ແລະຊີວິຕິນຊີ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ອາກາສະທາດ ອາໂປທາດ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານທີ່ກຳປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານນີ້ຊື່ວ່າເປັນຮູບລະອຽດ

[໙໓໖] ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານເປັນຮູບຫຍາບ ນັ້ນເປັນແນວໃດ?

ສັດທາຍະຕະນະ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ຮູປາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະທີ່ກຳບໍ່ໄດ້ປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານນີ້ຊື່ວ່າ ເປັນຮູບຫຍາບ

[໙໓໗] ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານເປັນຮູບລະອຽດນັ້ນເປັນແນວໃດ?

ກາຍວິນຍັດ ວະຈີວິນຍັດຕິ ລະຫຸຕາຮູບ ມຸທຸຕາຮູບ ກຳມັນຍະຕາຮູບ ຊະຣະຕາຮູບ ແລະອະນິດຈະຕາຮູບ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ອາກາສະທາດ ອາໂປທາດ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານທີ່ກຳບໍ່ໄດ້ປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານນີ້ຊື່ວ່າ ເປັນຮູບລະອຽດ

## ອຸປາທິນນຸປາທານິຍະທູເຣຈະຕຸກກະ

[໙໓໘] ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານເປັນຮູບໄກ ນັ້ນເປັນແນວໃດ?

ອິດຖິນຊີ ປຸຣິສິນຊີ ແລະຊີວິຕິນຊີ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ອາກາສະທາດ ອາໂປທາດ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານທີ່ກຳປຸງແຕ່ງຂຶ້ນ ຮູບທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານນີ້ຊື່ວ່າ ເປັນຮູບໄກ

[໗໓໗] ຮູບທີ່ກໍາອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງ ອຸປາທານເປັນຮູບໃກ້ ນັ້ນເປັນແນວໃດ?

ຈັກຂາຍະຕະນະ ຯລຯ ກາຍາຍະຕະນະ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ຮູປາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະທີ່ກໍາປຸງແຕ່ງຂຶ້ນ ຮູບທີ່ກໍາອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານນີ້ຊື່ວ່າເປັນຮູບໃກ້

[໗໔໐] ຮູບທີ່ກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານເປັນຮູບໄກ ນັ້ນເປັນແນວໃດ?

ກາຍວິນຍັດ ວະຈີວິນຍັດຕິ ລະຫຸຕາຮູບ ມຸທຸຕາຮູບ ກໍາມັນຍະຕາຮູບ ຊະຣະຕາຮູບ ແລະອະນິດຈະຕາຮູບ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ອາກາສະທາດ ອາໂປທາດ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານທີ່ກໍາບໍ່ໄດ້ປຸງແຕ່ງຂຶ້ນ ຮູບທີ່ກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານນີ້ຊື່ວ່າ ເປັນຮູບໄກ

[໗໔໑] ຮູບທີ່ກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານເປັນຮູບໃກ້ ນັ້ນເປັນແນວໃດ?

ສັດທາຍະຕະນະ ຫຼື ຮູບແມ່ນອື່ນ ມີຢູ່ ໄດ້ແກ່ ຮູປາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະທີ່ກໍາບໍ່ໄດ້ປຸງແຕ່ງຂຶ້ນ ຮູບທີ່ກໍາອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານນີ້ຊື່ວ່າເປັນຮູບໃກ້

## ສັບປະຕິຄະອິນທະຣິຍະຈະຕຸກກະ

[໗໔໒] ຮູບທີ່ກະທົບໄດ້ເປັນອິນທະຣິຍະຮູບ ນັ້ນເປັນແນວໃດ?

ຈັກຂຸນຊີ ຯລຯ ກາຍິນຊີ ຮູບທີ່ກະທົບໄດ້ນີ້ຊື່ວ່າ ເປັນອິນທະຣິຍະຮູບ

[໗໔໓] ຮູບທີ່ກະທົບໄດ້ບໍ່ເປັນອິນທະຣິຍະຮູບ ນັ້ນເປັນແນວໃດ?

ຮູປາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຮູບທີ່ກະທົບໄດ້ນີ້ຊື່ວ່າ ບໍ່ເປັນອິນທະຣິຍະຮູບ

[໗໔໔] ຮູບທີ່ກະທົບບໍ່ໄດ້ເປັນອິນທະຣິຍະຮູບ ນັ້ນເປັນແນວໃດ?

ອິດຖິນຊີ ປຸຣິສິນຊີ ແລະຊີວິຕິນຊີ ຮູບທີ່ກະທົບບໍ່ໄດ້ນີ້ຊື່ວ່າ ເປັນອິນທະຣິຍະຮູບ

[໗໔໕] ຮູບທີ່ກະທົບບໍ່ໄດ້ບໍ່ເປັນອິນທະຣິຍະຮູບ ນັ້ນເປັນແນວໃດ?

ກາຍວິນຍັດ ວະຈີວິນຍັດຕິ ຯລຯ ກະວະລິງກາຣາຫານ ຮູບທີ່ກະທົບບໍ່ໄດ້ນີ້ຊື່ວ່າບໍ່ເປັນອິນທະຣິຍະຮູບ

## ສັບປະຕິຄະມະຫາພູຕະຈະຕຸກກະ

[໗໔໖] ຮູບທີ່ກະທົບໄດ້ເປັນມະຫາພູຕະຮູບ ນັ້ນເປັນແນວໃດ?
ໂຜດຖັບພາຍະຕະນະ ຮູບທີ່ກະທົບໄດ້ນີ້ຊື່ວ່າ ເປັນມະຫາພູຕະຮູບ

[໗໔໗] ຮູບທີ່ກະທົບໄດ້ບໍ່ເປັນມະຫາພູຕະຮູບ ນັ້ນເປັນແນວໃດ?
ຈັກຂາຍະຕະນະ ຯລຯ ຣະສາຍະຕະນະ ຮູບທີ່ກະທົບໄດ້ນີ້ຊື່ວ່າ ບໍ່ເປັນມະຫາພູຕະຮູບ

[໗໔໘] ຮູບທີ່ກະທົບບໍ່ໄດ້ເປັນມະຫາພູຕະຮູບ ນັ້ນເປັນແນວໃດ?
ອາໂປທາດ ຮູບທີ່ກະທົບບໍ່ໄດ້ນີ້ຊື່ວ່າເປັນມະຫາພູຕະຮູບ

[໗໔໙] ຮູບທີ່ກະທົບບໍ່ໄດ້ບໍ່ເປັນມະຫາພູຕະຮູບ ນັ້ນເປັນແນວໃດ?
ອິດຖີນຊີ ຯລຯ ກະວະລິງກາຣາຫານ ຮູບທີ່ກະທົບບໍ່ໄດ້ນີ້ຊື່ວ່າ ບໍ່ເປັນມະຫາພູຕະຮູບ

## ອິນທະຣິຍະໂອລາຣິກະຈະຕຸກກະ

[໗໕໐] ຮູບທີ່ເປັນອິນທະຣິຍະຮູບເປັນຮູບຫຍາບ ນັ້ນເປັນແນວໃດ?
ຈັກຂຸນຊີ ຯລຯ ກາຍິນຊີ ຮູບທີ່ເປັນອິນທະຣິຍະຮູບນີ້ຊື່ວ່າ ເປັນຮູບຫຍາບ

[໗໕໑] ຮູບທີ່ເປັນອິນທະຣິຍະຮູບເປັນຮູບລະອຽດ ນັ້ນເປັນແນວໃດ?
ອິດຖີນຊີ ປຸຣິສິນຊີ ແລະຊີວິຕິນຊີ ຮູບທີ່ເປັນອິນທະຣິຍະຮູບນີ້ຊື່ວ່າ ເປັນຮູບລະອຽດ

[໗໕໒] ຮູບທີ່ບໍ່ເປັນອິນທະຣິຍະຮູບເປັນຮູບຫຍາບ ນັ້ນເປັນແນວໃດ?
ຮູປາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຮູບທີ່ບໍ່ເປັນອິນທະຣິຍະຮູບນີ້ຊື່ວ່າເປັນຮູບຫຍາບ

[໗໕໓] ຮູບທີ່ບໍ່ເປັນອິນທະຣິຍະຮູບເປັນຮູບລະອຽດ ນັ້ນເປັນແນວໃດ?
ກາຍວິນຍັດ ວະຈີວິນຍັດຕິ ຯລຯ ກະວະລິງກາຣາຫານ ຮູບທີ່ບໍ່ເປັນອິນທະຣິຍະຮູບນີ້ຊື່ວ່າ ເປັນຮູບລະອຽດ

## ອິນທະຣິຍະທູເຣຈະຕຸກກະ

[໗໕໔] ຮູບທີ່ເປັນອິນທະຣິຍະຮູບເປັນຮູບໄກ ນັ້ນເປັນແນວໃດ?
ອິດຖີນຊີ ປຸຣິສິນຊີ ແລະຊີວິຕິນຊີ ຮູບທີ່ເປັນອິນທະຣິຍະຮູບນີ້ຊື່ວ່າ ເປັນຮູບໄກ

[໗໕໕] ຮູບທີ່ເປັນອິນທະຣິຍະຮູບເປັນຮູບໃກ້ ນັ້ນເປັນແນວໃດ?

ຈັກຂຸນຊີ ໆລໆ ກາຍິນຊີ ຮູບທີ່ເປັນອິນທະຣິຍະຮູບນີ້ຊື່ວ່າ ເປັນຮູບໃກ້

[໙໕໖] ຮູບທີ່ບໍ່ເປັນອິນທະຣິຍະຮູບເປັນຮູບໄກ ນັ້ນເປັນແນວໃດ?

ກາຍວິນຍັດ ວະຈີວິນຍັດຕິ ໆລໆ ກະວະລິງກາຣາຫານ ຮູບທີ່ບໍ່ເປັນອິນທະຣິຍະຮູບນີ້ຊື່ວ່າ ເປັນຮູບໄກ

[໙໕໗] ຮູບທີ່ບໍ່ເປັນອິນທະຣິຍະຮູບເປັນຮູບໃກ້ ນັ້ນເປັນແນວໃດ?

ຮູປາຍະຕະນະ ໆລໆ ໂຜດຖັບພາຍະຕະນະ ຮູບທີ່ບໍ່ເປັນອິນທະຣິຍະຮູບນີ້ຊື່ວ່າເປັນຮູບໃກ້

## ມະຫາພູຕະໂອລາຣິກະຈະຕຸກກະ

[໙໕໘] ຮູບທີ່ເປັນມະຫາພູຕະຮູບເປັນຮູບຫຍາບ ນັ້ນເປັນແນວໃດ?

ໂຜດຖັບພາຍະຕະນະ ຮູບທີ່ເປັນມະຫາພູຕະຮູບນີ້ຊື່ວ່າ ເປັນຮູບຫຍາບ

[໙໕໙] ຮູບທີ່ເປັນມະຫາພູຕະຮູບເປັນຮູບລະອຽດ ນັ້ນເປັນແນວໃດ?

ອາໂປທາດ ຮູບທີ່ເປັນມະຫາພູຕະຮູບນີ້ຊື່ວ່າ ເປັນຮູບລະອຽດ

[໙໖໐] ຮູບທີ່ບໍ່ເປັນມະຫາພູຕະຮູບເປັນຮູບຫຍາບ ນັ້ນເປັນແນວໃດ?

ຈັກຂາຍະຕະນະ ໆລໆ ຣະສາຍະຕະນະ ຮູບທີ່ບໍ່ເປັນມະຫາພູຕະຮູບນີ້ຊື່ວ່າເປັນຮູບຫຍາບ

[໙໖໑] ຮູບທີ່ບໍ່ເປັນມະຫາພູຕະຮູບເປັນຮູບລະອຽດ ນັ້ນເປັນແນວໃດ?

ອິດຖິນຊີ ໆລໆ ກະວະລິງກາຣາຫານ ຮູບທີ່ບໍ່ເປັນມະຫາພູຕະຮູບນີ້ຊື່ວ່າເປັນຮູບລະອຽດ

## ມະຫາພູຕະທູເຣຈະຕຸກກະ

[໙໖໒] ຮູບທີ່ເປັນມະຫາພູຕະຮູບເປັນຮູບໄກ ນັ້ນເປັນແນວໃດ?

ອາໂປທາດ ຮູບທີ່ເປັນມະຫາພູຕະຮູບນີ້ຊື່ວ່າເປັນຮູບໄກ

[໙໖໓] ຮູບທີ່ເປັນມະຫາພູຕະຮູບເປັນຮູບໃກ້ ນັ້ນເປັນແນວໃດ?

ໂຜດຖັບພາຍະຕະນະ ຮູບທີ່ເປັນມະຫາພູຕະຮູບນີ້ຊື່ວ່າ ເປັນຮູບໃກ້

[໙໖໔] ຮູບທີ່ບໍ່ເປັນມະຫາພູຕະຮູບເປັນຮູບໄກ ນັ້ນເປັນແນວໃດ?

ອິດຖິນຊີ ໆລໆ ກະວະລິງກາຣາຫານ ຮູບທີ່ບໍ່ເປັນມະຫາພູຕະຮູບນີ້ຊື່ວ່າເປັນຮູບໄກ

[໙໖໕] ຮູບທີ່ບໍ່ເປັນມະຫາພູຕະຮູບເປັນຮູບໃກ້ ນັ້ນເປັນແນວໃດ?

ຈັກຂາຍະຕະນະ ໆລໆ ຣະສາຍະຕະນະ ຮູບທີ່ບໍ່ເປັນມະຫາພູຕະຮູບນີ້ຊື່ວ່າເປັນຮູບໃກ້

## ທິດຖາທິຈະຕຸກກະ

[໗໖໖] ຮູບທີ່ເຫັນໄດ້ຄືຮູປາຍະຕະນະ ຮູບທີ່ສະດັບໄດ້ຄືສັດທາຍະຕະນະ ຮູບທີ່ຮູ້ໄດ້ຄື ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະ ຮູບທີ່ຮູ້ແຈ້ງໄດ້ດ້ວຍໃຈຄືຮູບທັງໝົດ

ລວມຮູບໝວດລະ ໔ ແບບນີ້

**ຈະຕຸກກະນິດເທດ ຈົບ**

## ປັນຈະກະນິດເທດ

[໗໖໗] ຮູບທີ່ເປັນປະຖະວີທາດ ນັ້ນເປັນແນວໃດ?

ທຳມະຊາດທີ່ແຂງ ທຳມະຊາດທີ່ກະດ້າງ ຄວາມແຂງ ພາວະທີ່ແຂງພາຍໃນຕົນຫຼື ພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ຫຼື ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ຮູບນີ້ຊື່ວ່າ ເປັນປະຖະວີທາດ

[໗໖໘] ຮູບທີ່ເປັນອາໂປທາດ ນັ້ນເປັນແນວໃດ?

ຄວາມເອີບອາບ ທຳມະຊາດທີ່ເອີບອາບ ຄວາມໜຽວ ທຳມະຊາດທີ່ໜຽວ ທຳມະຊາດເປັນເຄື່ອງເກາະກຸມຮູບພາຍໃນຕົນ ຫຼື ພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ຫຼື ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖື ຮູບນີ້ຊື່ວ່າເປັນອາໂປທາດ

[໗໖໙] ຮູບທີ່ເປັນເຕໂຊທາດ ນັ້ນເປັນແນວໃດ?

ຄວາມຮ້ອນ ທຳມະຊາດທີ່ຮ້ອນ ຄວາມອຸ່ນ ທຳມະຊາດທີ່ອຸ່ນ ຄວາມອົບອຸ່ນ ທຳມະຊາດທີ່ອົບອຸ່ນພາຍໃນຕົນ ຫຼື ພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ຫຼື ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ຮູບນີ້ຊື່ວ່າ ເປັນເຕໂຊທາດ

[໗໗໐] ຮູບທີ່ເປັນວາໂຍທາດ ນັ້ນເປັນແນວໃດ?

ຄວາມພັດໄປມາ ທຳມະຊາດທີ່ພັດໄປມາ ທຳມະຊາດເຄື່ອງຄ້ຳຈຸນຮູບພາຍໃນຕົນຫຼືພາຍນອກຕົນ ທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖື ຫຼື ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື ຮູບນີ້ຊື່ວ່າ ເປັນວາໂຍທາດ

[໗໗໑] ຮູບທີ່ເປັນອຸປາທາຍະຮູບ ນັ້ນເປັນແນວໃດ?

ຈັກຂາຍະຕະນະ ໆລໆ ກະວະລິງກາຣາຫານ ຮູບນີ້ຊື່ວ່າ ເປັນອຸປາທາຍະຮູບ

ລວມຮູບໝວດລະ ໕ ແບບນີ້

**ປັນຈະກະນິທເທດ ຈົບ**

## ສັກກະນິດເທດ

[໙໗໘] ຮູບທີ່ຈັກຂຸວິນຍານຮູ້ໄດ້ຄື ຮູປາຍະຕະນະ ຮູບທີ່ໂສຕະວິນຍານຮູ້ໄດ້ຄືສັດທາຍະຕະນະ ຮູບທີ່ຄານະວິນຍານຮູ້ໄດ້ຄືຄັນທາຍະຕະນະ ຮູບທີ່ຊິວຫາວິນຍານຮູ້ໄດ້ຄືຣະສາຍະຕະນະ ຮູບທີ່ ກາຍວິນຍານຮູ້ໄດ້ຄືໂຜດຖັບພາຍະຕະນະ ຮູບທີ່ມະໂນວິນຍານຮູ້ໄດ້ຄືຮູບທັງໝົດ

ລວມຮູບໝວດລະ ໖ ແນວນີ້

### ສັກກະນິດເທດ ຈົບ

## ສັດຕະກະນິດເທດ

[໙໗໙] ຮູບທີ່ຈັກຂຸວິນຍານຮູ້ໄດ້ຄືຮູປາຍະຕະນະ ຮູບທີ່ໂສຕະວິນຍານຮູ້ໄດ້ຄືສັດທາຍະຕະນະ ຮູບທີ່ຄານະວິນຍານຮູ້ໄດ້ຄືຄັນທາຍະຕະນະ ຮູບທີ່ຊິວຫາວິນຍານຮູ້ໄດ້ຄືຣະສາຍະຕະນະ ຮູບທີ່ກາຍວິນຍານຮູ້ໄດ້ຄືໂຜດຖັບພາຍະຕະນະ ຮູບທີ່ມະໂນທາດຮູ້ໄດ້ຄືຮູປາຍະຕະນະ ສັດທາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະຮູບທີ່ມະໂນວິນຍານທາດຮູ້ໄດ້ຄືຮູບທັງໝົດ

ລວມຮູບໝວດລະ ໗ ແນວນີ້

### ສັດຕະກະນິດເທດ ຈົບ

## ອັດຖະກະນິດເທດ

[໙໗໘] ຮູບທີ່ຈັກຂຸວິນຍານຮູ້ໄດ້ຄືຮູປາຍະຕະນະ ຮູບທີ່ໂສຕະວິນຍານຮູ້ໄດ້ຄືສັດທາຍະຕະນະ ຮູບທີ່ຄານະວິນຍານຮູ້ໄດ້ຄືຄັນທາຍະຕະນະ ຮູບທີ່ຊິວຫາວິນຍານຮູ້ໄດ້ຄືຣະສາຍະຕະນະ ຮູບທີ່ກາຍວິນຍານຮູ້ໄດ້ຄືໂຜດຖັບພະທີ່ໜ້າພໍໃຈເຊິ່ງມີສຳຜັດເປັນສຸກ ຮູບທີ່ກາຍວິນຍານຮູ້ໄດ້ຄືໂຜດຖັບພະທີ່ບໍ່ໜ້າພໍໃຈເຊິ່ງມີສຳຜັດເປັນທຸກ ຮູບທີ່ມະໂນທາດຮູ້ໄດ້ຄືຮູປາຍະຕະນະ ສັດທາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະ ຮູບທີ່ມະໂນວິນຍານທາດຮູ້ໄດ້ຄືຮູບທັງໝົດ

ລວມຮູບໝວດລະ ໘ ແນວນີ້

### ອັດຖະກະນິດເທດ ຈົບ

## ນະວະກະນິດເທດ

[໙໗໕] ຮູບທີ່ເປັນຈັກຂຸນຊີ ນັ້ນເປັນແນວໃດ?

ຈັກຂຸໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ຯລຯ ນີ້ຊື່ວ່າເຮືອນວ່າງແດ່ ຮູບນີ້ຊື່ວ່າເປັນຈັກຂຸນຊີ

[໙໗໖] ຮູບທີ່ເປັນໂສຕິນຊີ ຯລຯ ເປັນຄານິນຊີ ຯລຯ ເປັນຊິວຫິນຊີ ຯລຯ ເປັນກາຍິນຊີ ຯລຯ ເປັນອິດຖິນຊີ ຯລຯ ເປັນປຸຣິສິນຊີ ຯລຯ ເປັນຊີວິຕິນຊີນັ້ນເປັນແນວໃດ?

ອາຍຸ ຄວາມດຳຣົງຢູ່ ຄວາມເປັນໄປ ກິຣິຍາທີ່ໃຫ້ເປັນໄປ ອາການທີ່ສືບເນື່ອງກັນ ຄວາມດຳເນີນໄປ ຄວາມຫຼໍ່ລ້ຽງ ຊີວິດ ຊີວິຕິນຊີແຫ່ງສະພາວະທຳທີ່ເປັນຮູບເຫຼົ່ານັ້ນ ຮູບນີ້ ຊື່ວ່າ ເປັນຊີວິຕິນຊີ

[໙໗໗] ຮູບທີ່ບໍ່ເປັນອິນຊີ ນັ້ນເປັນແນວໃດ?

ຮູປາຍະຕະນະ ຯລຯ ກະວະລິງກາຣາຫານ ຮູບນີ້ຊື່ວ່າ ບໍ່ເປັນອິນຊີ

ລວມຮູບໝວດລະ ໙ ແນວນີ້

**ນະວະກະນິດເທດ ຈົບ**

## ທະສະກະນິດເທດ

[໙໗໘] ຮູບທີ່ເປັນຈັກຂຸນຊີ ນັ້ນເປັນແນວໃດ?

ຈັກຂຸໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ຯລຯ ນີ້ຊື່ວ່າເຮືອນວ່າງແດ່ ຮູບນີ້ຊື່ວ່າ ເປັນຈັກຂຸນຊີ

[໙໗໙] ຮູບທີ່ເປັນໂສຕິນຊີ ຯລຯ ເປັນຄານິນຊີ ຯລຯ ເປັນຊິວຫິນຊີ ຯລຯ ເປັນກາຍິນຊີ ຯລຯ ເປັນອິດຖິນຊີ ຯລຯ ເປັນປຸຣິສິນຊີ ຯລຯ ເປັນຊີວິຕິນຊີ ນັ້ນເປັນແນວໃດ?

ອາຍຸ ຄວາມດຳຣົງຢູ່ ຄວາມເປັນໄປ ກິຣິຍາທີ່ໃຫ້ເປັນໄປ ອາການທີ່ສືບເນື່ອງກັນ ຄວາມດຳເນີນໄປ ຄວາມຫຼໍ່ລ້ຽງ ຊີວິດ ຊີວິຕິນຊີແຫ່ງສະພາວະທຳທີ່ເປັນຮູບເຫຼົ່ານັ້ນ ຮູບນີ້ຊື່ວ່າເປັນຊີວິຕິນຊີ

[໙໘໐] ຮູບທີ່ບໍ່ເປັນອິນຊີທີ່ກະທົບໄດ້ ນັ້ນເປັນແນວໃດ?

ຮູປາຍະຕະນະ ຯລຯ ໂຜດຖັບພາຍະຕະນະ ຮູບທີ່ບໍ່ເປັນອິນຊີນີ້ຊື່ວ່າກະທົບໄດ້

[໙໘໑] ຮູບທີ່ບໍ່ເປັນອິນຊີທີ່ກະທົບບໍ່ໄດ້ ນັ້ນເປັນແນວໃດ?

ກາຍວິນຍັດ ຯລຯ ກະວະລິງກາຣາຫານ ຮູບທີ່ບໍ່ເປັນອິນຊີນີ້ຊື່ວ່າກະທົບບໍ່ໄດ້

ລວມຮູບໝວດລະ ໑໐ ແນວນີ້

**ທະສະກະນິດເທດ ຈົບ**

## ເອກາທະສະກະນິດເທດ

[໙໗໔] ຮູບທີ່ເປັນຈັກຂາຍະຕະນະ ນັ້ນເປັນແນວໃດ?

ຈັກຂຸໃດ ເປັນປະສາທະຮູບ ອາໄສມະຫາພູຕະຮູບ ໔ ຯລຯ ນີ້ຊື່ວ່າເຮືອນວ່າງແດ່ ຮູບນີ້ຊື່ວ່າເປັນຈັກຂາຍະຕະນະ

[໙໗໕] ຮູບທີ່ເປັນໂສຕາຍະຕະນະ ຯລຯ ເປັນຄານາຍະຕະນະ ຯລຯ ເປັນຊິວຫາຍະຕະນະ ຯລຯ ເປັນກາຍາຍະຕະນະ ຯລຯ ເປັນຮູປາຍະຕະນະ ຯລຯ ເປັນສັດທາຍະຕະນະ ຯລຯ ເປັນຄັນທາຍະຕະນະ ຯລຯ ເປັນຣະສາຍະຕະນະ ຯລຯ ເປັນໂຜດຖັບພາຍະຕະນະ ນັ້ນເປັນແນວໃດ?

ປະຖະວີທາດ ຯລຯ ໂຜດຖັບພະທາດແດ່ ຮູບນີ້ຊື່ວ່າ ເປັນໂຜດຖັບພາຍະຕະນະ

[໙໗໖] ຮູບທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ເຊິ່ງນັບເນື່ອງໃນທຳມາຍະຕະນະ ນັ້ນເປັນແນວໃດ?

ອິດຖິນຊີ ຯລຯ ກະວະລິງກາຣາຫານ ຮູບທີ່ເຫັນບໍ່ໄດ້ ກະທົບບໍ່ໄດ້ນີ້ຊື່ວ່ານັບເນື່ອງໃນທຳມາຍະຕະນະ

ລວມຮູບໝວດລະ ໑໑ ແນວນີ້

**ເອກາທະສະກະນິດເທດ ຈົບ**

**ພານະວານທີ ໗ ຈົບ**

**ຮູບວິພັດຕິ ຈົບ**

**ຮູບກັນ ຈົບ**

# ໓. ນິກເຂປະກັນ

## ຕິກະນິກເຂປະ

### ໑. ກຸສະລະຕິກະ

[໙໗໔] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ກຸສົນມູນ ໓ ຄື ອະໂລພະ ອະໂທສະ ແລະອະໂມຫະ ໄດ້ແກ່ ເວທະນາຂັນ ສັນຍາຂັນ ສັງຂານຂັນ ວິນຍານຂັນທີ່ສຳປະຍຸດດ້ວຍກຸສົນມູນນັ້ນ ແລະກາຍຍະກຳ ວະຈີກຳ ມະໂນກຳ ທີ່ມີກຸສົນມູນນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

[໙໗໕] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ອະກຸສົນມູນ ໓ ຄື ໂລພະ ໂທສະ ໂມຫະ ແລະກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບອະກຸສົນມູນນັ້ນ ໄດ້ແກ່ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ທີ່ສຳປະຍຸດ ດ້ວຍອະກຸສົນມູນນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳ ທີ່ມີອະກຸສົນມູນນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະກຸສົນ

[໙໗໖] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ວິບາກແຫ່ງສະພາວະທຳທີ່ເປັນກຸສົນແລະອະກຸສົນ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ສະພາວະທຳທີ່ເປັນກິຣິຍາ ບໍ່ເປັນກຸສົນບໍ່ເປັນອະກຸສົນ ແລະບໍ່ເປັນວິບາກແຫ່ງກຳ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນ ອັບພະຍາກະຕະ

### ໒. ເວທະນາຕິກະ

[໙໗໗] ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາ ເປັນແນວໃດ?

ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ທີ່ສຳປະຍຸດດ້ວຍສຸກຂະເວທະນາຂັນນັ້ນ ເວັ້ນສຸກຂະເວທະນາໃນກາມາວະຈອນ ຮູບປາວະຈອນ ແລະໃນຈິດທີ່ບໍ່ນັບເນື່ອງໃນວັດຕະທຸກ ອັນເປັນບ່ອນເກີດແຫ່ງສຸກຂະເວທະນາແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍສຸກຂະເວທະນາ

[໙໗໘] ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາ ເປັນແນວໃດ?

ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ທີ່ສຳປະຍຸດດ້ວຍທຸກຂະເວທະນານັ້ນ ເວັ້ນທຸກຂະເວທະນາໃນກາມາວະຈອນອັນເປັນບ່ອນເກີດແຫ່ງທຸກຂະເວທະນາແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍທຸກຂະເວທະນາ

[໙໙໐] ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ເປັນແນວໃດ?

ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ນັ້ນ ເວັ້ນອະທຸກຂະມະສຸຂະເວທະນາໃນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະໃນຈິດທີ່ບໍ່ນັບເນື່ອງໃນວັດຕະທຸກ ອັນເປັນບ່ອນເກີດແຫ່ງອະທຸກຂະມະສຸຂະເວທະນາແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ

## ໓. ວິປາກະຕິກະ

[໙໙໑] ສະພາວະທຳທີ່ເປັນວິບາກ ເປັນແນວໃດ?

ວິບາກແຫ່ງສະພາວະທຳທີ່ເປັນກຸສົນແລະອະກຸສົນ ເຊິ່ງເປັນກາມາວະຈອນຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ສັນຍາຂັນ ສັງຂານ ຂັນ ແລະວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນວິບາກ

[໙໙໒] ສະພາວະທຳທີ່ເປັນເຫດໃຫ້ເກີດວິບາກ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນແລະອະກຸສົນ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບ ປາວະຈອນ ແລະ ທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ໆລໆ ແລະວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນເຫດໃຫ້ເກີດວິບາກ

[໙໙໓] ສະພາວະທຳທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ເປັນແນວໃດ?

ສະພາວະທຳທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ບໍ່ເປັນວິບາກແຫ່ງກຳ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກ

## ໔. ອຸປາທິນນະຕິກະ

[໙໙໔] ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາ ທານ ເປັນແນວໃດ?

ວິບາກແຫ່ງສະພາວະທຳທີ່ເປັນກຸສົນແລະອະກຸສົນ ເຊິ່ງເປັນອາລົມຂອງອາສະວະເປັນກາ ມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ເວທະນາຂັນ ໆລໆ ວິນຍານຂັນ ແລະຮູບທີ່ກຳປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະ ເປັນອາລົມຂອງອຸປາທານ

[໙໙໕] ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸ ປາທານ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນແລະອະກຸສົນ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ບໍ່ເປັນວິບາກແຫ່ງກຳ ແລະຮູບທີ່ກຳບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຢຶດຖືແຕ່ເປັນອາລົມຂອງອຸປາທານ

[໙໙໖] ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາທິດຖິບໍ່ຢຶດຖື ແລະບໍ່ເປັນອາລົມຂອງອຸປາທານ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງສະພາວະທຳເຫຼົ່ານີ້ຊື່ວ່າ ກຳອັນປະກອບດ້ວຍຕັນຫາທິດຖິບໍ່ຢຶດຖື ແລະບໍ່ເປັນອາລົມຂອງອຸປາທານ

## ໕. ສັງກິລິດຖະຕິກະ

[໙໙໗] ສະພາວະທຳທີ່ກິເລດເຮັດໃຫ້ເສົ້າໝອງ ແລະເປັນອາລົມຂອງກິເລດ ເປັນແນວໃດ?

ອະກຸສົນມູນ ໓ ຄື ໂລພະ ໂທສະ ໂມຫະ ແລະກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບອະກຸສົນມູນນັ້ນ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນທີ່ສຳປະຍຸດດ້ວຍອະກຸສົນມູນນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳ ທີ່ມີອະກຸສົນມູນນັ້ນເປັນສະມຸດຖານສະພາວະທຳເຫຼົ່ານີ້ຊື່ວ່າ ກິເລດເຮັດໃຫ້ເສົ້າໝອງ ແລະເປັນອາລົມຂອງກິເລດ

[໙໙໘] ສະພາວະທຳທີ່ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດ

[໙໙໙] ສະພາວະທຳທີ່ກິເລດບໍ່ເຮັດໃຫ້ເສົ້າໝອງ ແລະບໍ່ເປັນອາລົມຂອງກິເລດ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງສະພາວະທຳເຫຼົ່ານີ້ຊື່ວ່າກິເລດບໍ່ເຮັດໃຫ້ເສົ້າໝອງ ແລະບໍ່ເປັນອາລົມຂອງກິເລດ

## ໖. ວິຕັກກະຕິກະ

[໑໐໐໐] ສະພາວະທຳທີ່ມີທັງວິຕົກແລະວິຈານ ເປັນແນວໃດ?

ເວທະນາຂັນ ຯລຯ ວິນຍານຂັນ ທີ່ສຳປະຍຸດດ້ວຍວິຕົກແລະວິຈານນັ້ນ ເວັ້ນວິຕົກແລະວິຈານໃນກາມາວະຈອນ ຮູບປາວະຈອນ ແລະໃນຈິດທີ່ບໍ່ນັບເນື່ອງໃນວັດຕະທຸກ ອັນເປັນບ່ອນເກີດແຫ່ງສະພາວະທຳທີ່ມີທັງວິຕົກແລະວິຈານ ສະພາວະທຳເຫຼົ່ານີ້ຊື່ວ່າມີທັງວິຕົກແລະວິຈານ

[໑໐໐໑] ສະພາວະທຳທີ່ບໍ່ມີວິຕົກມີພຽງວິຈານ ເປັນແນວໃດ?

ເວທະນາຂັນ ຯລຯ ວິນຍານຂັນ ທີ່ສຳປະຍຸດດ້ວຍວິຈານນັ້ນ ເວັ້ນວິຈານໃນຮູບປາວະຈອນ ແລະໃນຈິດທີ່ບໍ່ນັບເນື່ອງໃນວັດຕະທຸກ ອັນເປັນບ່ອນເກີດແຫ່ງສະພາວະທຳທີ່ບໍ່ມີວິຕົກມີພຽງວິຈານແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ມີວິຕົກມີພຽງວິຈານ

[໑໐໐໒] ສະພາວະທຳທີ່ບໍ່ມີທັງວິຕົກແລະວິຈານ ເປັນແນວໃດ?

ເວທະນາຂັນ ຯລຯ ວິນຍານຂັນໃນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະໃນຈິດທີ່ ບໍ່ນັບເນື່ອງໃນວັດຕະທຸກ ອັນເປັນບ່ອນເກີດແຫ່ງສະພາວະທຳທີ່ບໍ່ມີທັງວິຕົກແລະວິຈານແລ້ວ ຮູບທັງໝົດແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ມີທັງວິຕົກແລະວິຈານ

## ໗. ປີຕິຕິກະ

[໑໐໐໓] ສະພາວະທຳທີ່ປະກອບດ້ວຍປີຕິ ເປັນແນວໃດ?

ເວທະນາຂັນ ຯລຯ ວິນຍານຂັນ ທີ່ສຳປະຍຸດດ້ວຍປີຕິນັ້ນ ເວັ້ນປີຕິໃນກາມາວະຈອນ ຮູບປາວະຈອນ ແລະໃນຈິດທີ່ບໍ່ນັບເນື່ອໃນວັດຕະທຸກ ອັນເປັນບ່ອນເກີດແຫ່ງປີຕິແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ເກີດພ້ອມດ້ວຍປີຕິ

[໑໐໐໔] ສະພາວະທຳທີ່ປະກອບດ້ວຍສຸກ ເປັນແນວໃດ?

ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ທີ່ສຳປະຍຸດດ້ວຍສຸກນັ້ນ ເວັ້ນສຸກໃນກາມາວະຈອນ ຮູບປາວະຈອນ ແລະໃນຈິດທີ່ບໍ່ນັບເນື່ອງໃນວັດຕະທຸກ ອັນເປັນບ່ອນເກີດແຫ່ງສຸກແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ເກີດພ້ອມດ້ວຍສຸກ

[໑໐໐໕] ສະພາວະທຳທີ່ປະກອບດ້ວຍອຸເປກຂາ ເປັນແນວໃດ?

ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ທີ່ສຳປະຍຸດດ້ວຍອຸເປກຂານັ້ນ ເວັ້ນ ອຸເປກຂາໃນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະໃນຈິດທີ່ບໍ່ນັບເນື່ອງໃນວັດຕະທຸກ ອັນເປັນບ່ອນເກີດແຫ່ງອຸເປກຂາແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ເກີດພ້ອມດ້ວຍອຸເປກຂາ

## ໘. ທັດສະນະຕິກະ

[໑໐໐໖] ສະພາວະທຳທີ່ຕ້ອງປະຫານດ້ວຍໂສດາປັດຕິມັກ ເປັນແນວໃດ?

ສັງໂຍດ ໓ ຄື

໑. ສັກກາຍະທິດຖິ

໒. ວິຈິກິດສາ

໓. ສີລັບພະຕະປະຣາມາດ

[໑໐໐໗] ບັນດາສັງໂຍດທັງ ໓ ເຫຼົ່ານັ້ນ ສັກກາຍະທິດຖິ ເປັນແນວໃດ?

ປຸຖຸຊົນໃນໂລກນີ້ ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການຝຶກຝົນໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການຝຶກຝົນໃນທຳຂອງສັດຕະບຸຣຸດ ຍ່ອມເຫັນຮູບເປັນຕົນຫຼືເຫັນຕົນມີຮູບ ເຫັນຮູບໃນຕົນຫຼືເຫັນຕົນໃນຮູບ ເຫັນເວທະນາເປັນຕົນຫຼືເຫັນຕົນມີເວທະນາ ເຫັນເວທະນາໃນຕົນຫຼືເຫັນຕົນໃນເວທະນາ ເຫັນສັນຍາເປັນຕົນຫຼືເຫັນຕົນມີສັນຍາ ເຫັນສັນຍາໃນຕົນຫຼືເຫັນຕົນໃນສັນຍາ ເຫັນສັງຂານເປັນຕົນຫຼືເຫັນຕົນມີສັງຂານ ເຫັນສັງຂານໃນຕົນຫຼືເຫັນຕົນໃນສັງຂານ ເຫັນວິນຍານເປັນຕົນຫຼືເຫັນຕົນມີວິນຍານ ເຫັນວິນຍານໃນຕົນຫຼືເຫັນຕົນໃນວິນຍານ ທິດຖິ ຄວາມເຫັນຜິດ ປ່າຮົກຄືທິດຖິ ກັນດານຄືທິດຖິ ຄວາມເຫັນເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຍຶດຖື ຄວາມຍຶດໝັ້ນ ຄວາມຕັ້ງໝັ້ນ ຄວາມຖືຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິອັນເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຍຶດຖືໂດຍ ວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ສັກກາຍະທິດຖິ

[໑໐໐໘] ວິຈິກິດສາ ເປັນແນວໃດ?

ປຸຖຸຊົນຍ່ອມເຄືອບແຄງສົງໄສໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ໃນສິກຂາ ໃນສ່ວນອະດີດ ໃນສ່ວນອະນາຄົດ ໃນສ່ວນອະດີດ ແລະສ່ວນອະນາຄົດ ໃນປະຕິດຈະສະມຸບບາດທີ່ວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຄວາມເຄືອບແຄງ ກິຣິຍາທີ່ເຄືອບແຄງ ພາວະທີ່ເຄືອບແຄງ ຄວາມຄິດເຫັນໄປຕ່າງ ໆ ຄວາມຕັດສິນອາລົມບໍ່ໄດ້ ຄວາມເຫັນເປັນສອງທາງ ຄວາມເຫັນເໝືອນທາງສອງແຍກ ຄວາມສົງໄສ ຄວາມບໍ່ສາມາດຖືເອົາໂດຍສ່ວນດຽວໄດ້ ຄວາມຄິດສ່າຍໄປ ຄວາມຄິດມົວໄປ ຄວາມບໍ່ສາມາດຢັ່ງລົງຖືເອົາເປັນ ຍຸດຕິໄດ້ ຄວາມກະດ້າງແຫ່ງຈິດ ຄວາມລັງເລໃຈ ນີ້ຮຽກວ່າ ວິຈິກິດສາ

[໑໐໐໙] ສີລັບພະຕະປະຣາມາດ ເປັນແນວໃດ?

ສະມະນະພາມພາຍນອກແຕ່ສາດສະໜານີ້ ມີຄວາມເຫັນວ່າ ຄວາມບໍລິສຸດຍ່ອມມີໄດ້ດ້ວຍສີນດ້ວຍພົດ ດ້ວຍສີນແລະພົດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ປ່າຮົກຄືທິດຖິ ກັນດານຄືທິດຖິ ຄວາມເຫັນເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຍຶດຖື ຄວາມຍຶດໝັ້ນ ຄວາມຕັ້ງໝັ້ນ ຄວາມຖືຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກ ວ່າສີລັບພະຕະປະຣາມາດ

[໑໐໑໐] ສັງໂຍດ ໓ ເຫຼົ່ານີ້ແລະກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບສັງໂຍດ ໓ ນັ້ນ ໄດ້ແກ່ເວທະນາຂັນ ຯລຯ ວິນຍານຂັນ ທີ່ສຳປະຍຸດດ້ວຍສັງໂຍດ ໓ ນັ້ນ ກາຍຍະກຳ ວະຈີກຳ ແລະ

ມະໂນກຳທີ່ມີສັງໂຍດ ໓ ນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າ ຕ້ອງປະຫານດ້ວຍໂສດາປັດຕິມັກ

[໑໐໑໑] ສະພາວະທຳທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນແນວໃດ?

ໂລພະ ໂທສະ ໂມຫະທີ່ເຫຼືອ ແລະກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບໂລພະໂທສະ ໂມຫະນັ້ນ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ທີ່ສຳປະຍຸດດ້ວຍໂລພະ ໂທສະ ໂມຫະນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳ ທີ່ມີໂລພະ ໂທສະ ໂມຫະນັ້ນ ເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າ ຕ້ອງປະຫານດ້ວຍມັກເບື້ອງເທິງ ໓

[໑໐໑໒] ສະພາວະທຳທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະເຊິ່ງເປັນກາມາວະຈອນ ຣູບປາວະຈອນ ອະຣູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓

## ໗. ທັດສະນະເຫດຕິກະ

[໑໐໑໓] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ເປັນແນວໃດ?

ສັງໂຍດ ໓ ຄື

໑. ສັກກາຍະທິດຖິ

໒. ວິຈິກິດສາ

໓. ສີລັບພະຕະປະຣາມາດ

[໑໐໑໔] ບັນດາສັງໂຍດ ໓ ນັ້ນ ສັກກາຍະທິດຖິ ເປັນແນວໃດ?

ຯລຯ ນີ້ຮຽກວ່າ ສັກກາຍະທິດຖິ

[໑໐໑໕] ວິຈິກິດສາ ເປັນແນວໃດ?

ຯລຯ ນີ້ຮຽກວ່າ ວິຈິກິດສາ

[໑໐໑໖] ສີລັບພະຕະປະຣາມາດ ເປັນແນວໃດ?

ຯລຯ ນີ້ຮຽກວ່າ ສີລັບພະຕະປະຣາມາດ

[໑໐໑໗] ສັງໂຍດ ໓ ເຫຼົ່ານີ້ ແລະກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບສັງໂຍດ ໓ ນັ້ນ ໄດ້ແກ່ ເວທະນາຂັນ ໆລໆ ວິນຍານຂັນ ທີ່ສຳປະຍຸດດ້ວຍສັງໂຍດ ໓ ນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳທີ່ມີສັງໂຍດ ໓ ນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າ ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ

ສັງໂຍດ ໓ ຄື

໑. ສັກກາຍະທິດຖິ
໒. ວິຈິກິດສາ
໓. ສີລັບພະຕະປະຣາມາດ

ສະພາວະທຳເຫຼົ່ານີ້ຊື່ວ່າ ຕ້ອງປະຫານດ້ວຍໂສດາປັດຕິມັກ ໂລພະ ໂທສະ ໂມຫະທີ່ຕັ້ງຢູ່ໃນຖານດຽວກັນກັບສັງໂຍດ ໓ ນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ສ່ວນກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບໂລພະ ໂທສະ ໂມຫະນັ້ນ ໄດ້ແກ່ເວທະນາຂັນ ໆລໆ ວິນຍານຂັນທີ່ສຳປະຍຸດດ້ວຍໂລພະ ໂທສະ ໂມຫະ ນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳ ທີ່ມີໂລພະ ໂທສະ ໂມຫະນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າ ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ

[໑໐໑໘] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນແນວໃດ?

ໂລພະ ໂທສະ ໂມຫະທີ່ເຫຼືອ ສະພາວະທຳເຫຼົ່ານີ້ຊື່ວ່າ ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບໂລພະ ໂທສະ ໂມຫະນັ້ນ ໄດ້ແກ່ເວທະນາຂັນ ໆລໆ ວິນຍານຂັນ ທີ່ສຳປະຍຸດດ້ວຍໂລພະ ໂທສະ ໂມຫະນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳທີ່ມີໂລພະ ໂທສະ ໂມຫະນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ ຊື່ວ່າ ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓

[໑໐໑໙] ສະພາວະທຳທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓ ເປັນແນວໃດ?

ເວັ້ນສະພາວະທຳເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນອະກຸສົນ ແລະອັບພະຍາກະຕະທີ່ເຫຼືອ ເຊິ່ງເປັນກາມາວະຈອນ ຣູບປາວະຈອນ ອະຣູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ສັນຍາຂັນ ສັງຂານຂັນ ວິນຍານຂັນ ຣູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ແລະມັກເບື້ອງເທິງ ໓

## ໑໐. ອາຈະຍະຄານິຕິກະ

[໑໐໒໐] ສະພາວະທຳທີ່ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ແລະອະກຸສົນເປັນອາລົມຂອງອາສະວະ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ໄດ້ແກ່ ເວທະນາຂັນ ໆລໆ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນເຫດໃຫ້ເຖິງປະຕິສົນທິ ແລະຈຸຕິ

[໑໐໘໑] ສະພາວະທຳທີ່ເປັນເຫດໃຫ້ເຖິງນິບພານ ເປັນແນວໃດ?
ມັກ ໔ ເຊິ່ງບໍ່ນັບເນື່ອງໃນວັດຕະທຸກ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນເຫດໃຫ້ເຖິງນິບພານ

[໑໐໘໘] ສະພາວະທຳທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິຈຸຕິແລະນິບພານ ເປັນແນວໃດ?
ວິບາກແຫ່ງສະພາວະທຳທີ່ເປັນກຸສົນແລະອະກຸສົນ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ໆລໆ ວິນຍານຂັນ ສະພາວະທຳທີ່ເປັນກິຣິຍາ ເຊິ່ງບໍ່ເປັນກຸສົນ ບໍ່ເປັນອະກຸສົນ ບໍ່ເປັນວິບາກແຫ່ງກຳຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນເຫດໃຫ້ເຖິງປະຕິສົນທິຈຸຕິແລະນິບພານ

## ໑໑. ເສກຂະຕິກະ

[໑໐໘໓] ສະພາວະທຳທີ່ເປັນຂອງເສຂະບຸກຄົນ ເປັນແນວໃດ?
ມັກ ໔ ເຊິ່ງບໍ່ນັບເນື່ອງໃນວັດຕະທຸກ ແລະສາມັນຍະຜົນ ໓ ເບື້ອງຕ່ຳ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນຂອງເສຂະບຸກຄົນ

[໑໐໘໔] ສະພາວະທຳທີ່ເປັນຂອງອະເສຂະບຸກຄົນ ເປັນແນວໃດ?
ອະຣະຫັດຕະຜົນອັນຕັ້ງຢູ່ເບື້ອງສູງ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນຂອງອະເສຂະບຸກຄົນ

[໑໐໘໕] ສະພາວະທຳທີ່ບໍ່ເປັນຂອງເສຂະບຸກຄົນ ແລະອະເສຂະບຸກຄົນ ເປັນແນວໃດ?
ເວັ້ນສະພາວະທຳເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອເຊິ່ງເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນໄດ້ແກ່ ເວທະນາຂັນ ໆລໆ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນ

## ໑໘. ປະຣິດຕະຕິກະ

[໑໐໘໖] ສະພາວະທຳທີ່ເປັນປະຣິດຕະ ເປັນແນວໃດ?
ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນກາມາວະຈອນທັງໝົດ ໄດ້ແກ່ ຮູບຂັນ ໆລໆ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນປະຣິດຕະ

[໑໐໔໗] ສະພາວະທຳທີ່ເປັນມະຫັກຄະຕະ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະ ເຊິ່ງເປັນຣູບປາວະຈອນ ແລະອະຣູບປາວະຈອນ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນມະຫັກຄະຕະ

[໑໐໔໘] ສະພາວະທຳທີ່ເປັນອັບປະມານະ ເປັນແນວໃດ?

ມັກ ຜົນຂອງມັກ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ເຊິ່ງບໍ່ນັບເນື່ອງໃນວັດຕະທຸກ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອັບປະມານະ

## ໑໓. ປະຣິດຕາຣຳມະນະຕິກະ

[໑໐໔໙] ສະພາວະທຳທີ່ມີປະຣິດຕະເປັນອາລົມ ເປັນແນວໃດ?

ສະພາວະທຳທີ່ເປັນຈິດແລະເຈຕະສິກ ຜາຣົບສະພາວະທຳທີ່ເປັນປະຣິດຕະເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າມີປະຣິດຕະເປັນອາລົມ

[໑໐໕໐] ສະພາວະທຳທີ່ມີມະຫັກຄະຕະເປັນອາລົມ ເປັນແນວໃດ?

ສະພາວະທຳທີ່ເປັນຈິດແລະເຈຕະສິກ ຜາຣົບສະພາວະທຳທີ່ເປັນມະຫັກຄະຕະເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ມີມະຫັກຄະຕະເປັນອາລົມ

[໑໐໕໑] ສະພາວະທຳທີ່ມີອັບປະມານະເປັນອາລົມ ເປັນແນວໃດ?

ສະພາວະທຳທີ່ເປັນຈິດແລະເຈຕະສິກ ຜາຣົບສະພາວະທຳທີ່ເປັນອັບປະມານະເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ມີອັບປະມານະເປັນອາລົມ

## ໑໔. ຫີນະຕິກະ

[໑໐໕໒] ສະພາວະທຳຊັ້ນຕ່ຳ ເປັນແນວໃດ?

ອະກຸສົນມູນ ໓ ຄື ໂລພະ ໂທສະ ໂມຫະ ແລະກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບ ອະກຸສົນມູນນັ້ນ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ທີ່ສຳປະຍຸດດ້ວຍອະກຸສົນມູນນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳ ທີ່ມີອະກຸສົນມູນນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າທຳຊັ້ນຕ່ຳ

[໑໐໕໓] ສະພາວະທຳຊັ້ນກາງ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນແລະອັບພະຍາກະຕະ ເປັນອາລົມຂອງອາສະວະ ເຊິ່ງເປັນກາມາວະຈອນ ຣູບປາວະຈອນ ແລະອະຣູບປາວະຈອນ ໄດ້ແກ່ ຣູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ ວ່າທຳຊັ້ນກາງ

[໑໐໓໔] ສະພາວະທຳຊັ້ນປະນີດ ເປັນແນວໃດ?

ມັກ ຜົນຂອງມັກ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ເຊິ່ງບໍ່ນັບເນື່ອງໃນວັດຕະທຸກ ສະພາວະທຳເຫຼົ່ານີ້ຊື່ວ່າ ທຳຊັ້ນປະນີດ

## ໑໕. ມິດສັດຕະຕິກະ

[໑໐໓໕] ສະພາວະທຳທີ່ມີສະພາວະຜິດແລະໃຫ້ຜົນແນ່ນອນ ເປັນແນວໃດ?

ອະນັນຕະຣິຍະກຳ ໕ ແລະມິດສາທິດຖິທີ່ໃຫ້ຜົນແນ່ນອນ ສະພາວະທຳເຫຼົ່ານີ້ຊື່ວ່າມີສະພາວະຜິດ ແລະໃຫ້ຜົນແນ່ນອນ

[໑໐໓໖] ສະພາວະທຳທີ່ມີສະພາວະຖືກແລະໃຫ້ຜົນແນ່ນອນ ເປັນແນວໃດ?

ມັກ ໔ ເຊິ່ງບໍ່ນັບເນື່ອງໃນວັດຕະທຸກ ສະພາວະທຳເຫຼົ່ານີ້ຊື່ວ່າ ມີສະພາວະຖືກແລະໃຫ້ຜົນແນ່ນອນ

[໑໐໓໗] ສະພາວະທຳທີ່ບໍ່ແນ່ນອນໂດຍອາການທັງສອງນັ້ນ ເປັນແນວໃດ?

ເວັ້ນສະພາວະທຳເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອ ເຊິ່ງເປັນກາມາວະຈອນ ຣູບປາວະຈອນ ອະຣູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ຣູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ແນ່ນອນໂດຍອາການທັງສອງນັ້ນ

## ໑໖. ມັກຄາຣຳມະນະຕິກະ

[໑໐໓໘] ສະພາວະທຳທີ່ມີມັກເປັນອາລົມ ເປັນແນວໃດ?

ສະພາວະທຳທີ່ເປັນຈິດແລະເຈຕະສິກ ຜາຣົບອະຣິຍະມັກເກີດຂຶ້ນ ສະພາວະທຳເຫຼົ່ານີ້ ຊື່ວ່າ ມີມັກເປັນອາລົມ

[໑໐໓໙] ສະພາວະທຳທີ່ມີມັກເປັນເຫດ ເປັນແນວໃດ?

ເວັ້ນອົງມັກແລ້ວ ເວທະນາຂັນ ຯລຯ ວິນຍານຂັນ ທີ່ສຳປະຍຸດດ້ວຍອົງມັກ ນັ້ນຂອງທ່ານຜູ້ພຽບພ້ອມດ້ວຍອະຣິຍະມັກ ສະພາວະທຳເຫຼົ່ານີ້ຊື່ວ່າມີມັກເປັນເຫດ ສຳມາທິດຖິຂອງທ່ານຜູ້ພຽບພ້ອມດ້ວຍອະຣິຍະມັກ ເປັນມັກແລະເປັນເຫດ ເວັ້ນສຳມາທິດຖິແລ້ວ ເວທະນາຂັນ ຯລຯ ວິນຍານຂັນ ທີ່ສຳປະຍຸດດ້ວຍສຳມາທິດຖິນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ມີມັກເປັນເຫດ ອະໂລພະ ອະໂທສະ ແລະອະໂມຫະຂອງທ່ານຜູ້ພຽບພ້ອມດ້ວຍອະຣິຍະມັກ ສະພາວະທຳເຫຼົ່ານີ້ຊື່ວ່າ ມີມັກເປັນເຫດ ເວທະນາຂັນ ຯລຯ ວິນຍານຂັນທີ່ສຳປະຍຸດດ້ວຍອະໂລພະ ອະໂທສະ ແລະອະໂມຫະນັ້ນສະພາວະທຳເຫຼົ່ານີ້ຊື່ວ່າ ມີມັກເປັນເຫດ

[໑໐໔໐] ສະພາວະທຳທີ່ມີມັກເປັນອະທິບໍດີ ເປັນແນວໃດ?

ສະພາວະທຳທີ່ເປັນຈິດແລະເຈຕະສິກເຮັດອະຣິຍະມັກໃຫ້ເປັນອະທິບໍດີເກີດຂຶ້ນ ສະພາວະທຳເຫຼົ່ານີ້ ຊື່ວ່າມີມັກເປັນອະທິບໍດີ ເວທະນາຂັນ ຯລຯ ເວັ້ນວິມັງສາຂອງທ່ານຜູ້ພຽບພ້ອມດ້ວຍອະຣິຍະມັກເຊິ່ງກຳລັງຈະເລີນມັກທີ່ມີວິມັງສາເປັນອະທິບໍດີແລ້ວ ເວທະນາຂັນ ຯລຯ ວິນຍານຂັນທີ່ສຳປະຍຸດດ້ວຍວິມັງສານັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າມີມັກເປັນອະທິບໍດີ

## ໑໗. ອຸບປັນນະຕິກະ

[໑໐໔໑] ສະພາວະທຳທີ່ເກີດຂຶ້ນ ເປັນແນວໃດ?

ສະພາວະທຳທີ່ເກີດ ທີ່ເປັນ ເກີດພ້ອມ ບັງເກີດ ບັງເກີດສະເພາະຜາກົດ ເກີດຂຶ້ນ ເກີດຂຶ້ນພ້ອມ ຕັ້ງຂຶ້ນ ຕັ້ງຂຶ້ນພ້ອມ ທີ່ເກີດຂຶ້ນ ສົງເຄາະເຂົ້າກັບສ່ວນທີ່ເກີດຂຶ້ນ ໄດ້ແກ່ ຮູບຂັນ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ສະພາວະທຳເຫຼົ່ານີ້ ຊື່ວ່າທຳທີ່ເກີດຂຶ້ນ

[໑໐໔໒] ສະພາວະທຳທີ່ຍັງບໍ່ເກີດຂຶ້ນ ເປັນແນວໃດ?

ສະພາວະທຳທີ່ຍັງບໍ່ເກີດ ຍັງບໍ່ເປັນ ຍັງບໍ່ບັງເກີດ ຍັງບໍ່ບັງເກີດສະເພາະ ຍັງບໍ່ ຜາກົດຍັງບໍ່ເກີດຂຶ້ນ ຍັງບໍ່ເກີດຂຶ້ນພ້ອມ ຍັງບໍ່ຕັ້ງຂຶ້ນ ຍັງບໍ່ຕັ້ງຂຶ້ນພ້ອມ ທີ່ຍັງບໍ່ເກີດຂຶ້ນ ສົງເຄາະເຂົ້າກັບສ່ວນທີ່ຍັງບໍ່ເກີດຂຶ້ນ ໄດ້ແກ່ຮູບຂັນ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າຍັງບໍ່ເກີດຂຶ້ນ

[໑໐໔໓] ສະພາວະທຳທີ່ຈັກເກີດຂຶ້ນແນ່ນອນ ເປັນແນວໃດ?

ວິບາກແຫ່ງສະພາວະທຳທີ່ເປັນກຸສົນແລະອະກຸສົນ ທີ່ຍັງບໍ່ໃຫ້ຜົນ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ເວທະນາຂັນ ຯລຯ ວິນຍານຂັນ ແລະຮູບທີ່ກຳປຸງແຕ່ງຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ຈັກເກີດຂຶ້ນແນ່ນອນ

## ໑໘. ອະຕີຕະຕິກະ

[໑໐໔໔] ສະພາວະທຳທີ່ເປັນອະດີດ ເປັນແນວໃດ?

ສະພາວະທຳທີ່ລ່ວງໄປແລ້ວ ດັບໄປແລ້ວ ປາດໄປແລ້ວ ປ່ຽນໄປແລ້ວ ເຖິງຄວາມດັບແລ້ວ ເຖິງຄວາມດັບສູນແລ້ວ ເກີດຂຶ້ນດັບໄປແລ້ວ ທີ່ລ່ວງໄປແລ້ວ ສົງເຄາະດ້ວຍສ່ວນທີ່ລ່ວງໄປແລ້ວ ໄດ້ແກ່ ຮູບຂັນ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະດີດ

[໑໐໔໕] ສະພາວະທຳທີ່ເປັນອະນາຄົດ ເປັນແນວໃດ?

ສະພາວະທຳທີ່ຍັງບໍ່ເກີດ ຍັງບໍ່ມີ ຍັງບໍ່ເກີດພ້ອມ ຍັງບໍ່ບັງເກີດ ຍັງບໍ່ບັງເກີດສະເພາະຍັງບໍ່ຜາກົດ ຍັງບໍ່ເກີດຂຶ້ນ ຍັງບໍ່ເກີດຂຶ້ນພ້ອມ ຍັງບໍ່ຕັ້ງຂຶ້ນ ຍັງບໍ່ຕັ້ງຂຶ້ນພ້ອມ ທີ່ຍັງບໍ່ມາເຖິງ

ສິງເຄາະດ້ວຍສ່ວນທີ່ຍັງບໍ່ມາເຖິງ ໄດ້ແກ່ ຮູບຂັນ ເວນາຂັນ ສັນຍາຂັນ ສັງຂານຂັນ ແລະວິນ ຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອະນາຄົດ

[໑໐໔໖] ສະພາວະທຳທີ່ເປັນປັດຈຸບັນ ເປັນແນວໃດ?

ສະພາວະທຳທີ່ກຳລັງເກີດ ກຳລັງເປັນ ກຳລັງເກີດພ້ອມ ກຳລັງບັງເກີດ ກຳລັງບັງເກີດ ສະເພາະ ກຳລັງຜາກົດ  ກຳລັງເກີດຂຶ້ນ ກຳລັງເກີດຂຶ້ນພ້ອມ ກຳລັງຕັ້ງຂຶ້ນ ກຳລັງຕັ້ງຂຶ້ນພ້ອມ ກຳລັງເກີດຂຶ້ນສະເພາະ ສິງເຄາະດ້ວຍສ່ວນທີ່ກຳລັງເກີດຂຶ້ນສະເພາະໜ້າ ໄດ້ແກ່ຮູບຂັນ ເວທະ ນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນປັດຈຸບັນ

## ໑໙. ອະຕີຕາຣຳມະນະຕິກະ

[໑໐໔໗] ສະພາວະທຳທີ່ມີອະດີດທຳເປັນອາລົມ ເປັນແນວໃດ?

ສະພາວະທຳທີ່ເປັນຈິດແລະເຈຕະສິກ ຜາຣົບສະພາວະທຳທີ່ເປັນອະດີດເກີດຂຶ້ນ ສະພາ ວະທຳເຫຼົ່ານີ້ ຊື່ວ່າ ມີອະດີດທຳເປັນອາລົມ

[໑໐໔໘] ສະພາວະທຳທີ່ມີອະນາຄົດທຳເປັນອາລົມ ເປັນແນວໃດ?

ສະພາວະທຳທີ່ເປັນຈິດແລະເຈຕະສິກ ຜາຣົບສະພາວະທຳທີ່ເປັນອະນາຄົດ ເກີດຂຶ້ນ ສະ ພາວະທຳເຫຼົ່ານີ້ຊື່ວ່າ ມີອະນາຄົດທຳເປັນອາລົມ

[໑໐໔໙] ສະພາວະທຳທີ່ມີປັດຈຸບັນທຳເປັນອາລົມ ເປັນແນວໃດ?

ສະພາວະທຳທີ່ເປັນຈິດແລະເຈຕະສິກ ຜາຣົບສະພາວະທຳທີ່ເປັນປັດຈຸບັນເກີດຂຶ້ນ ສະພາ ວະທຳເຫຼົ່ານີ້ຊື່ວ່າ ມີປັດຈຸບັນທຳເປັນອາລົມ

## ໔໐. ອັດຊັດຕະຕິກະ

[໑໐໕໐] ສະພາວະທຳທີ່ເປັນພາຍໃນຕົນ ເປັນແນວໃດ?

ສະພາວະທຳທີ່ເປັນພາຍໃນຕົນ ມີສະເພາະຕົນ ເກີດແຕ່ຕົນ ເປັນຂອງສະເພາະແຕ່ລະບຸກ ຄົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖືຂອງສັດນັ້ນ ໆ ໄດ້ແກ່ ຮູບ ຂັນ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນພາຍໃນຕົນ

[໑໐໕໑] ສະພາວະທຳທີ່ເປັນພາຍນອກຕົນ ເປັນແນວໃດ?

ສະພາວະທຳທີ່ເປັນພາຍໃນຕົນ ເປັນຂອງສະເພາະຕົນ ເກີດແຕ່ຕົນ ເປັນຂອງສະເພາະ ແຕ່ລະບຸກຄົນ ທີ່ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື ຂອງສັດອື່ນ ຂອງບຸກຄົນອື່ນນັ້ນ ໆ ໄດ້ແກ່ ຮູບຂັນ ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ສະພາວະທຳເຫຼົ່ານີ້ ຊື່ວ່າ ເປັນພາຍນອກຕົນ

[໑໐໕໔] ສະພາວະທຳທີ່ເປັນພາຍໃນຕົນແລະພາຍນອກຕົນ ເປັນແນວໃດ?

ສະພາວະທຳທັງສອງປະເພດທີ່ກ່າວມານັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນພາຍໃນຕົນ ແລະພາຍນອກຕົນ

## ໔໑. ອັດຊັດຕາຣຳມະນະຕິກະ

[໑໐໕໕] ສະພາວະທຳທີ່ມີທຳພາຍໃນຕົນເປັນອາລົມ ເປັນແນວໃດ?

ສະພາວະທຳທີ່ເປັນຈິດແລະເຈຕະສິກຜາຣົບສະພາວະທຳທີ່ເປັນພາຍໃນຕົນເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ມີທຳພາຍໃນຕົນເປັນອາລົມ

[໑໐໕໔] ສະພາວະທຳທີ່ມີທຳພາຍນອກຕົນເປັນອາລົມ ເປັນແນວໃດ?

ສະພາວະທຳທີ່ເປັນຈິດ ແລະເຈຕະສິກຜາຣົບສະພາວະທຳທີ່ເປັນພາຍນອກຕົນເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ມີທຳພາຍນອກຕົນເປັນອາລົມ

[໑໐໕໕] ສະພາວະທຳທີ່ມີທຳພາຍໃນຕົນ ແລະພາຍນອກຕົນເປັນອາລົມເປັນເຫດເປັນແນວໃດ?

ສະພາວະທຳທີ່ເປັນຈິດ ແລະເຈຕະສິກຜາຣົບສະພາວະທຳທີ່ເປັນພາຍໃນຕົນແລະພາຍນອກຕົນເກີດຂຶ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ມີທຳພາຍໃນຕົນ ແລະພາຍນອກຕົນເປັນອາລົມ

## ໔໔. ສະນິທັດສະນະຕິກະ

[໑໐໕໖] ສະພາວະທຳທີ່ເຫັນໄດ້ແລະກະທົບໄດ້ ເປັນແນວໃດ?

ຣູປາຍະຕະນະ ສະພາວະທຳເຫຼົ່ານີ້ຊື່ວ່າ ເຫັນໄດ້ແລະກະທົບໄດ້

[໑໐໕໗] ສະພາວະທຳທີ່ເຫັນບໍ່ໄດ້ແຕ່ກະທົບໄດ້ ເປັນແນວໃດ?

ຈັກຂາຍະຕະນະ ໂສຕາຍະຕະນະ ຄານາຍະຕະນະ ຊິວຫາຍະຕະນະ ກາຍາຍະຕະນະ ສັດທາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ແລະໂຜດຖັບພາຍະຕະນະ ສະພາວະທຳເຫຼົ່ານີ້ຊື່ວ່າ ເຫັນບໍ່ໄດ້ ແຕ່ກະທົບໄດ້

[໑໐໕໘] ສະພາວະທຳທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ຣູບທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ເຊິ່ງນັບເນື່ອງໃນທຳມາຍະຕະນະ ແລະທາດທີ່ປັດໄຈບໍ່ປຸງແຕ່ງສະພາວະທຳເຫຼົ່ານີ້ຊື່ວ່າເຫັນບໍ່ໄດ້ແລະກະທົບບໍ່ໄດ້

**ຕິກະນິກເຂປະ ຈົບ**

# ທຸກະນິກະເຂປະ

## ໑. ເຫຕຸໂຄດສະກະ

### ໑. ເຫຕຸກະ

[໑໐໘໙] ສະພາວະທຳທີ່ເປັນເຫດ ເປັນແນວໃດ?

ເຫດທີ່ເປັນກຸສົນມີ ໓ ເຫດທີ່ເປັນອະກຸສົນມີ ໓ ເຫດທີ່ເປັນອັບພະຍາກະຕະມີ ໓ ເຫດທີ່ເປັນກາມາວະຈອນມີ ໙ ເຫດທີ່ເປັນຣູບປາວະຈອນມີ ໖ ເຫດທີ່ເປັນອະຣູບປາວະຈອນມີ ໖ ເຫດທີ່ເປັນໂລກຸດຕະຣະມີ ໖

[໑໐໗໐] ບັນດາສະພາວະທຳທີ່ເປັນເຫດເຫຼົ່ານັ້ນ ເຫດທີ່ເປັນກຸສົນ ໓ ເປັນແນວໃດ?

ເຫດທີ່ເປັນກຸສົນ ໓ ຄື ອະໂລພະ ອະໂທສະ ແລະອະໂມຫະ

[໑໐໗໑] ບັນດາເຫດທີ່ເປັນກຸສົນ ໓ ນັ້ນ ອະໂລພະ ເປັນແນວໃດ?

ຄວາມບໍ່ໂລບ ກິຣິຍາທີ່ບໍ່ໂລບ ພາວະທີ່ບໍ່ໂລບ ຄວາມບໍ່ກຳໜັດ ກິຣິຍາທີ່ບໍ່ກຳໜັດ ພາວະທີ່ບໍ່ກຳໜັດ ຄວາມບໍ່ເພ່ງເລັງ ກຸສົນມູນຄືອະໂລພະ ນີ້ຮຽກວ່າອະໂລພະ

[໑໐໗໘] ອະໂທສະ ເປັນແນວໃດ?

ຄວາມບໍ່ຄິດປະທຸດສະຮ້າຍ ກິຣິຍາທີ່ບໍ່ຄິດປະທຸດສະຮ້າຍ ພາວະທີ່ບໍ່ຄິດປະທຸດສະຮ້າຍ ຄວາມມີໄມຕີ ກິຣິຍາທີ່ສະໜິດສະໜົມ ພາວະທີ່ສະໜິດສະໜົມ ຄວາມອີດູ ກິຣິຍາທີ່ອີດູ ພາວະທີ່ອີດູ ຄວາມສະແຫວງຫາປະໂຫຍດເກື້ອກູນ ຄວາມສົງສານ ຄວາມບໍ່ພະຍາບາດ ຄວາມບໍ່ຄິດບຽດບຽນ ກຸສົນມູນຄືອະໂທສະ ນີ້ຮຽກວ່າ ອະໂທສະ

[໑໐໗໓] ອະໂມຫະ ເປັນແນວໃດ?

ຄວາມຮູ້ໃນທຸກ ຄວາມຮູ້ໃນທຸກຂະສະມຸໄທ ຄວາມຮູ້ໃນທຸກຂະນິໂຣທະ ຄວາມຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ຄວາມຮູ້ໃນສ່ວນອະດີດ ຄວາມຮູ້ໃນສ່ວນອະນາຄົດ ຄວາມຮູ້ໃນສ່ວນອະດີດແລະສ່ວນອະນາຄົດ ຄວາມຮູ້ໃນປະຕິດຈະສະມຸບບາດວ່າ ຍ້ອນທຳນີ້ເປັນປັດໄຈທຳນີ້ຈຶ່ງມີ ປັນຍາ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມເລືອກສັນ ຄວາມວິໄຈທຳ ຄວາມກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ້ງຊັດ ຄວາມຄົ້ນຄິດ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ຄວາມເຫັນແຈ້ງ ຄວາມຮູ້ດີ ປັນຍາເໝືອນປະຕັກ ປັນຍາ ປັນຍິນຊີ ປັນຍາພະລະ ປັນຍາເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະ

ຫວ່າງຄືປັນຍາ ແສງສະຫວ່າງຄື ປັນຍາ ປັນຍາເໝືອນປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທີ່ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າອະໂມຫະ

## ສະພາວະທຳເຫຼົ່ານີ້ຊື່ວ່າເຫດທີ່ເປັນກຸສົນ ໓

[໑໐໗໔] ບັນດາສະພາວະທຳທີ່ເປັນເຫດເຫຼົ່ານັ້ນ ເຫດທີ່ເປັນອະກຸສົນ ໓ ເປັນແນວໃດ? ເຫດທີ່ເປັນອະກຸສົນ ໓ ຄື ໂລພະ ໂທສະ ແລະໂມຫະ

[໑໐໗໕] ບັນດາເຫດທີ່ເປັນອະກຸສົນ ໓ ນັ້ນ ໂລພະ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັກແຮງກ້າ ຄວາມໄປຕາມອາລົມ ຄວາມຍິນດີ ຄວາມເພີດເພີນ ຄວາມກຳໜັດດ້ວຍອຳນາດຄວາມເພີດເພີນ ຄວາມກຳໜັດແຮງກ້າແຫ່ງຈິດ ຄວາມຢາກ ຄວາມສະຍົບ ຄວາມມົກມຸ້ນ ຄວາມຕ້ອງການ ຄວາມຮັກແພງ ຄວາມຂ້ອງຢູ່ ຄວາມຈົມຢູ່ ທຳມະຊາດທີ່ດຶງໄປ ທຳມະຊາດທີ່ຫຼອກລວງ ທຳມະຊາດທີ່ຍັງສັດໃຫ້ເກີດ ທຳມະຊາດທີ່ຍັງສັດໃຫ້ເກີດພ້ອມ ທຳມະຊາດທີ່ຮ້ອຍຮັດ ທຳມະຊາດທີ່ມີຂ່າຍ ທຳມະຊາດທີ່ກຳຊາບໃຈ ທຳມະຊາດທີ່ຊ່ານໄປ ທຳມະຊາດເໝືອນເສັ້ນດ້າຍ ທຳມະຊາດທີ່ແຜ່ໄປ ທຳມະຊາດທີ່ປະມວນມາ ທຳມະຊາດເປັນເພື່ອນສອງ ປະນິທານ ທຳມະຊາດທີ່ນຳໄປສູ່ພົບ ຕັນຫາເໝືອນປ່າ ຕັນຫາເໝືອນດົງ ຄວາມກ່ຽວຂ້ອງ ຄວາມເຍື່ອໃຍ ຄວາມຫ່ວງໃຍ ຄວາມຜູກພັນ ຄວາມຫວັງ ກິຣິຍາທີ່ຫວັງ ພາວະທີ່ຫວັງ ຄວາມຫວັງຮູບ ຄວາມຫວັງສຽງ ຄວາມຫວັງກິ່ນ ຄວາມຫວັງຣົດ ຄວາມຫວັງໂຜດຖັບພະ ຄວາມຫວັງລາບ ຄວາມຫວັງຊັບ ຄວາມຫວັງບຸດ ຄວາມຫວັງຊີວິດ ທຳມະຊາດທີ່ຊຶ່ມ ທຳມະຊາດທີ່ຊຶ່ມທົ່ວ ທຳມະຊາດທີ່ຊຶ່ມຍິ່ງ ຄວາມຊຶ່ມ ກິຣິຍາທີ່ຊຶ່ມ ພາວະທີ່ຊຶ່ມ ຄວາມລະໂມບ ກິຣິຍາທີ່ລະໂມບ ພາວະທີ່ລະໂມບທຳມະຊາດເປັນເຫດຊົມຊານໄປ ພາວະທີ່ຕ້ອງການແຕ່ອາລົມດີ ໆ ຄວາມກຳໜັດໃນຖານະ ອັນບໍ່ຄວນ ຄວາມໂລບເກີນພໍດີ ຄວາມຕິດໃຈ ກິຣິຍາທີ່ຕິດໃຈ ຄວາມປາຖະໜາ ຄວາມຍິນດີໃຈ ຄວາມປາຖະໜາແຮງກ້າ ກາມຕັນຫາ ພະວະຕັນຫາ ວິພະວະຕັນຫາ ຮູບຕັນຫາ ອະຮູບຕັນຫາ ນິໂຣທະຕັນຫາ ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ ໂອຄະ ໂຍຄະ ຄັນຖະ ອຸປາທານ ອາວອນ ນິວອນ ເຄື່ອງປິດບັງ ເຄື່ອງຜູກ ອຸປະກິເລດ ອະນຸໄສ ປະຣິຍຸດຖານ ຕັນຫາເໝືອນເຄືອເຂົາ ຄວາມປາຖະໜາ ແລະຕິດຢູ່ໃນວັດຖຸມີປະການຕ່າງ ໆ ມູນເຫດແຫ່ງທຸກ ເຫດແຫ່ງທຸກ ທຸກຂະສະມຸໄທ ບ່ວງແຫ່ງມານ ເບັດແຫ່ງມານ ວິໄສແຫ່ງມານ ຕັນຫາເໝືອນແມ່ນ້ຳ ຕັນຫາເໝືອນຕາໜ່າງ ຕັນຫາເໝືອນເຊືອກ ຕັນຫາເໝືອນມະຫາສະມຸດ ອະພິດຊາ ອະກຸສົນມູນຄື ໂລພະ ນີ້ຊື່ວ່າ ໂລພະ

[໑໐໗໖] ໂທສະ ເປັນແນວໃດ?

ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ກຳລັງທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ຈັກທຳຄວາມເສື່ອມເສຍ

ແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມເສື່ອມເສຍ ฯລฯ ກຳລັງທຳຄວາມເສື່ອມເສຍ ฯລฯ ຈັກທຳຄວາມເສື່ອມເສຍແກ່ຄົນທີ່ຮັກທີ່ຮັກແພງຂອງເຮົາ ຄວາມອາຄາດ ເກີດຂຶ້ນວ່າ ຜູ້ນີ້ໄດ້ເຄີຍທຳຄວາມຈະເລີນ ฯລฯ ກຳລັງທຳຄວາມຈະເລີນ ฯລฯ ຈັກທຳຄວາມຈະເລີນແກ່ຄົນຜູ້ບໍ່ເປັນທີ່ຮັກທີ່ບໍ່ຮັກແພງຂອງເຮົາ ຫຼື ຄວາມອາຄາດເກີດຂຶ້ນໃນຖານະອັນບໍ່ສົມຄວນ ຈິດອາຄາດ ຄວາມຂັດເຄືອງ ຄວາມກະທົບກະທັ່ງ ຄວາມແຄ້ນ ຄວາມເຄືອງ ຄວາມຂຸ່ນເຄືອງ ຄວາມດົ້ນດົນ ໂທສະ ຄວາມຄິດປະທຸດສະຮ້າຍ ຄວາມຄິດມຸ້ງຮ້າຍ ຄວາມຂຸ່ນຈິດ ທຳມະຊາດທີ່ປະທຸດສະຮ້າຍໃຈ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ມີລັກສະນະເຊັ່ນວ່ານີ້ (ແລະ) ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມພິໂຣດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ຍິນດີແຫ່ງຈິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ໂທສະ

[໑໐໖໗] ໂມຫະ ເປັນແນວໃດ?

ຄວາມບໍ່ຮູ້ໃນທຸກ ຄວາມບໍ່ຮູ້ໃນທຸກຂະສະມຸໄທ ຄວາມບໍ່ຮູ້ໃນທຸກຂະນິໂຣທະ ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ຄວາມບໍ່ຮູ້ໃນສ່ວນອະດີດ ຄວາມບໍ່ຮູ້ໃນສ່ວນອະນາຄົດ ຄວາມບໍ່ຮູ້ໃນສ່ວນອະດີດແລະອະນາຄົດ ຄວາມບໍ່ຮູ້ໃນປະຕິດຈະສະມຸບບາດວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຄວາມບໍ່ຮູ້ ຄວາມບໍ່ເຫັນ ຄວາມບໍ່ຕັດສະຮູ້ ຄວາມບໍ່ຮູ້ໂດຍສົມຄວນ ຄວາມບໍ່ຮູ້ຕາມເປັນຈິງ ຄວາມບໍ່ແທງຕະຫຼອດ ຄວາມບໍ່ຖືເອົາໂດຍຖືກຕ້ອງ ຄວາມບໍ່ຢັ່ງລົງໂດຍຮອບຄອບ ຄວາມບໍ່ພິນິດ ຄວາມບໍ່ພິຈາລະນາ ຄວາມບໍ່ເຮັດໃຫ້ປະຈັກ ຄວາມຊາມປັນຍາ ຄວາມໂງ່ຈ້ຳ ຄວາມບໍ່ຮູ້ແຈ້ງ ຄວາມຫຼົງ ຄວາມລຸ່ມຫຼົງ ຄວາມຫຼົງໃຫຼ ອະວິດຊາ ໂອຄະຄືອະວິດຊາ ໂຍຄະຄືອະວິດຊາ ອະນຸໄສຄືອະວິດຊາ ປະຣິຍຸດຖານຄືອະວິດຊາ ຫຼິ້ມຄືອະວິດຊາ ອະກຸສົນມູນຄືໂມຫະ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ໂມຫະ

ສະພາວະທຳເຫຼົ່ານີ້ຊື່ວ່າເຫດທີ່ເປັນອະກຸສົນ ໓

[໑໐໖໘] ບັນດາສະພາວະທຳທີ່ເປັນເຫດເຫຼົ່ານັ້ນ ເຫດທີ່ເປັນອັບພະຍາກະຕະ ໓ ເປັນແນວໃດ?

ອະໂລພະ ອະໂທສະ ແລະອະໂມຫະ ຝ່າຍວິບາກ ແຫ່ງສະພາວະທຳທີ່ເປັນກຸສົນ ຫຼືອະໂລພະ ອະໂທສະ ແລະອະໂມຫະ ໃນສະພາວະທຳທີ່ເປັນອັບພະຍາກະຕະກິຣິຍາ ສະພາວະທຳເຫຼົ່ານີ້ຊື່ວ່າ ເຫດທີ່ເປັນອັບພະຍາກະຕະ ໓

[໑໐໖໙] ບັນດາເຫດເຫຼົ່ານັ້ນ ເຫດທີ່ເປັນກາມາວະຈອນ ໙ ເປັນແນວໃດ?

ເຫດທີ່ເປັນກຸສົນມີ ໓ ເຫດທີ່ເປັນອະກຸສົນມີ ໓ ເຫດທີ່ເປັນອັບພະຍາກະຕະມີ ໓ ສະພາວະທຳເຫຼົ່ານີ້ຊື່ວ່າ ເຫດທີ່ເປັນກາມາວະຈອນ ໙

[໑໐໗໐] ບັນດາສະພາວະທຳທີ່ເປັນເຫດເຫຼົ່ານັ້ນ ເຫດທີ່ເປັນຮູບປາວະຈອນ ໓ ເປັນແນວໃດ?

ເຫດທີ່ເປັນກຸສົນມີ ໓ ເຫດທີ່ເປັນອັບພະຍາກະຕະມີ ໓ ສະພາວະທຳເຫຼົ່ານີ້ຊື່ວ່າເຫດທີ່ເປັນຮູບປາວະຈອນ ໖

[໑໐໗໑] ບັນດາສະພາວະທຳທີ່ເປັນເຫດເຫຼົ່ານັ້ນ ເຫດທີ່ເປັນອະຮູບປາວະຈອນ ໖ ເປັນແນວໃດ?

ເຫດທີ່ເປັນກຸສົນມີ ໓ ເຫດທີ່ເປັນອັບພະຍາກະຕະມີ ໓ ສະພາວະທຳເຫຼົ່ານີ້ຊື່ວ່າເຫດທີ່ເປັນອະຮູບປາວະຈອນ ໖

[໑໐໗໒] ບັນດາເຫດເຫຼົ່ານັ້ນ ເຫດທີ່ເປັນໂລກຸດຕະຣະ ໖ ເປັນແນວໃດ?

ເຫດທີ່ເປັນກຸສົນມີ ໓ ເຫດທີ່ເປັນອັບພະຍາກະຕະມີ ໓ ສະພາວະທຳເຫຼົ່ານີ້ຊື່ວ່າເຫດທີ່ເປັນໂລກຸດຕະຣະ ໖

[໑໐໗໓] ບັນດາເຫດທີ່ເປັນໂລກຸດຕະຣະ ໖ ເຫຼົ່ານັ້ນ ເຫດທີ່ເປັນກຸສົນ ໓ ເປັນແນວໃດ?

ເຫດທີ່ເປັນກຸສົນ ໓ ຄື ອະໂລພະ ອະໂທສະ ແລະອະໂມຫະ

[໑໐໗໔] ບັນດາເຫດທີ່ເປັນກຸສົນ ໓ ເຫຼົ່ານັ້ນ ອະໂລພະ ເປັນແນວໃດ?

ຄວາມບໍ່ໂລບ ກິຣິຍາທີ່ບໍ່ໂລບ ພາວະທີ່ບໍ່ໂລບ ຄວາມບໍ່ກຳໜັດ ກິຣິຍາທີ່ບໍ່ກຳໜັດ ພາວະທີ່ບໍ່ກຳໜັດ ຄວາມບໍ່ເພັ່ງເລັງ ກຸສົນມູນຄືອະໂລພະ ນີ້ຮຽກວ່າ ອະໂລພະ

[໑໐໗໕] ອະໂທສະ ເປັນແນວໃດ?

ຄວາມບໍ່ຄິດປະທຸດສະຮ້າຍ ກິຣິຍາທີ່ບໍ່ຄິດປະທຸດສະຮ້າຍ ພາວະທີ່ບໍ່ຄິດປະທຸດສະຮ້າຍ ໆລໆ ຄວາມບໍ່ພະຍາບາດ ຄວາມບໍ່ຄິດບຽດບຽນ ກຸສົນມູນຄື ອະໂທສະນີ້ຮຽກວ່າ ອະໂທສະ

[໑໐໗໖] ອະໂມຫະ ເປັນແນວໃດ?

ຄວາມຮູ້ໃນທຸກ ຄວາມຮູ້ໃນທຸກຂະສະມຸໄທ ຄວາມຮູ້ໃນທຸກຂະນິໂຣທະ ຄວາມຮູ້ໃນທຸກຂະນິໂຣທະຄາມີນີປະຕິປະທາ ຄວາມຮູ້ໃນສ່ວນອະດີດ ຄວາມຮູ້ໃນສ່ວນອະນາຄົດ ຄວາມຮູ້ໃນສ່ວນອະດີດ ແລະ ອະນາຄົດ ຄວາມຮູ້ໃນປະຕິດຈະສະມຸບບາດວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ປັນຍາ ກິຣິຍາທີ່ຮູ້ແຈ້ງ ຄວາມວິໄຈ ຄວາມເລືອກສັນ ຄວາມວິໄຈທຳ ຄວາມກຳນົດໝາຍ ຄວາມເຂົ້າໄປກຳນົດ ຄວາມເຂົ້າໄປກຳນົດສະເພາະ ພາວະທີ່ຮູ້ ພາວະທີ່ສະຫຼາດ ພາວະທີ່ຮູ້ລະອຽດ ຄວາມຮູ້ຢ່າງແຈ້ງຊັດ ຄວາມຄົ້ນຄິດ ຄວາມພິຈາຣະນາ ປັນຍາເໝືອນແຜ່ນດິນ ປັນຍາເຄື່ອງທຳລາຍກິເລດ ປັນຍາເຄື່ອງນຳທາງ ຄວາມເຫັນແຈ້ງ ຄວາມຮູ້ດີ ປັນຍາເໝືອນ ປະຕັກ ປັນຍາ ປັນຍິນຊີ ປັນຍາພະລະ ປັນຍາເໝືອນອາວຸດ ປັນຍາເໝືອນຜາສາດ ຄວາມສະຫວ່າງຄື

ປັນຍາ ແສງສະຫວ່າງຄືປັນຍາ ປັນຍາເໝືອນປະທີບ ປັນຍາເໝືອນດວງແກ້ວ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທຳມະວິຈະຍະສຳໂພດຊົງ ອັນເປັນອົງມັກ ນັບເນື່ອງໃນມັກ ນີ້ຊື່ວ່າ ອະໂມຫະ

## ສະພາວະທຳເຫຼົ່ານີ້ຊື່ວ່າເຫດທີ່ເປັນກຸສົນ

[໑໐໗໗] ເຫດທີ່ເປັນອັບພະຍາກະຕະ ໓ ເປັນແນວໃດ?

ອະໂລພະ ອະໂທສະ ແລະອະໂມຫະ ຝ່າຍວິບາກແຫ່ງສະພາວະທຳທີ່ເປັນກຸສົນສະພາວະທຳເຫຼົ່ານີ້ຊື່ວ່າເຫດທີ່ເປັນອັບພະຍາກະຕະ ໓

ສະພາວະທຳເຫຼົ່ານີ້ຊື່ວ່າເຫດທີ່ເປັນໂລກຸດຕະຣະ ໙

## ສະພາວະທຳເຫຼົ່ານີ້ຊື່ວ່າເປັນເຫດ

[໑໐໗໘] ສະພາວະທຳທີ່ບໍ່ເປັນເຫດ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນເຫດເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອ ເວັ້ນສະພາວະທຳທີ່ເປັນເຫດເຫຼົ່ານັ້ນ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ເວທະນາຂັນ ໗ລ໗ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນເຫດ

## ໔. ສະເຫຕຸກະທຸກະ

[໑໐໗໙] ສະພາວະທຳທີ່ມີເຫດ ເປັນແນວໃດ?

ສະພາວະທຳທີ່ມີເຫດ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນສະພາວະທຳເຫຼົ່ານີ້ຊື່ວ່າມີເຫດ

[໑໐໘໐] ສະພາວະທຳທີ່ບໍ່ມີເຫດ ເປັນແນວໃດ?

ສະພາວະທຳທີ່ບໍ່ມີເຫດ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ມີເຫດ

## ໓. ເຫຕຸສຳປະຍຸດຕະທຸກະ

[໑໐໘໑] ສະພາວະທຳທີ່ສຳປະຍຸດດ້ວຍເຫດ ເປັນແນວໃດ?

ສະພາວະທຳທີ່ສຳປະຍຸດດ້ວຍເຫດ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍເຫດ

[໑໐໗໔] ສະພາວະທຳທີ່ວິບປະຍຸດຈາກເຫດ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກເຫດ ໄດ້ແກ່ ເວທະນາຂັນ ໆລໆ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າວິບປະຍຸດຈາກເຫດ

## ໔. ເຫຕຸສະເຫຕຸກະທຸກະ

[໑໐໗໓] ສະພາວະທຳທີ່ເປັນເຫດແລະມີເຫດ ເປັນແນວໃດ?

ໂລພະເປັນເຫດແລະມີເຫດຍ້ອນໂມຫະ ໂມຫະເປັນເຫດ ແລະມີເຫດຍ້ອນໂລພະໂທສະ ເປັນເຫດ ແລະມີເຫດຍ້ອນໂມຫະ ໂມຫະເປັນເຫດ ແລະມີເຫດຍ້ອນໂທສະ ອະໂລພະ ອະໂທສະ ແລະອະໂມຫະນັ້ນເປັນເຫດ ແລະມີເຫດຍ້ອນອາໄສກັນ ແລະກັນສະພາວະທຳເຫຼົ່ານີ້ຊື່ວ່າ ເປັນເຫດ ແລະມີເຫດ

[໑໐໗໔] ສະພາວະທຳທີ່ມີເຫດແຕ່ບໍ່ເປັນເຫດ ເປັນແນວໃດ?

ເວັ້ນສະພາວະທຳ (ທີ່ເປັນເຫດ) ເຫຼົ່ານັ້ນແລ້ວ ສະພາວະທຳທີ່ມີເຫດໄດ້ແກ່ເວທະນາຂັນ ໆລໆ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ມີເຫດແຕ່ບໍ່ເປັນເຫດ

## ໕. ເຫຕຸເຫຕຸສຳປະຍຸດຕະທຸກະ

[໑໐໗໕] ສະພາວະທຳທີ່ເປັນເຫດແລະສຳປະຍຸດດ້ວຍເຫດ ເປັນແນວໃດ?

ໂລພະເປັນເຫດ ແລະສຳປະຍຸດດ້ວຍເຫດຍ້ອນໂມຫະ ໂມຫະເປັນເຫດແລະສຳປະຍຸດດ້ວຍເຫດຍ້ອນໂລພະ ໂທສະເປັນເຫດ ແລະສຳປະຍຸດດ້ວຍເຫດຍ້ອນໂມຫະ ໂມຫະເປັນເຫດ ແລະ ສຳປະຍຸດດ້ວຍເຫດຍ້ອນໂທສະ ອະໂລພະ ອະໂທສະ ແລະອະໂມຫະນັ້ນເປັນເຫດແລະສຳປະຍຸດດ້ວຍເຫດ ຍ້ອນອາໄສກັນແລະກັນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນເຫດແລະສຳປະຍຸດດ້ວຍເຫດ

[໑໐໗໖] ສະພາວະທຳທີ່ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ ເປັນແນວໃດ?

ເວັ້ນສະພາວະທຳເຫຼົ່ານັ້ນແລ້ວ ສະພາວະທຳທີ່ສຳປະຍຸດດ້ວຍເຫດ ໄດ້ແກ່ເວທະນາຂັນ ໆລໆ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍເຫດແຕ່ບໍ່ເປັນເຫດ

## ໖. ນະເຫຕຸສະເຫຕຸກະທຸກະ

[໑໐໗໗] ສະພາວະທຳທີ່ບໍ່ເປັນເຫດແຕ່ມີເຫດ ເປັນແນວໃດ?

ສະພາວະທຳທີ່ບໍ່ເປັນເຫດແຕ່ມີເຫດ ໄດ້ແກ່ ເວທະນາຂັນ ໆລໆ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນເຫດແຕ່ມີເຫດ

[໑໐໗໗] ສະພາວະທຳທີ່ບໍ່ເປັນເຫດແລະບໍ່ມີເຫດ ເປັນແນວໃດ?

ສະພາວະທຳທີ່ບໍ່ເປັນເຫດ ແລະບໍ່ມີເຫດ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ເປັນເຫດແລະບໍ່ມີເຫດ

**ເຫຕຸໂຄດສະກະ ຈົບ**

## ໒. ຈູລັນຕະຣະທຸກະ

## ໑. ສັບປັດຈະຍະທຸກະ

[໑໐໗໘] ສະພາວະທຳທີ່ມີປັດໄຈປຸງແຕ່ງ ເປັນແນວໃດ?

ຂັນ ໕ ຄື

໑. ຮູບຂັນ
໒. ເວທະນາຂັນ
໓. ສັນຍາຂັນ
໔. ສັງຂານຂັນ
໕. ວິນຍານຂັນ

ສະພາວະທຳເຫຼົ່ານີ້ຊື່ວ່າມີປັດໄຈປຸງແຕ່ງ

[໑໐໘໐] ສະພາວະທຳທີ່ບໍ່ມີປັດໄຈປຸງແຕ່ງ ເປັນແນວໃດ?

ທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳນີ້ຊື່ວ່າ ບໍ່ມີປັດໄຈປຸງແຕ່ງ

## ໒. ສັງຂະຕະທຸກະ

[໑໐໘໑] ສະພາວະທຳທີ່ຖືກປັດໄຈປຸງແຕ່ງ ເປັນແນວໃດ?

ສະພາວະທຳທີ່ມີປັດໄຈປຸງແຕ່ງ ຊື່ວ່າ ຖືກປັດໄຈປຸງແຕ່ງ

[໑໐໘໒] ສະພາວະທຳທີ່ບໍ່ຖືກປັດໄຈປຸງແຕ່ງ ເປັນແນວໃດ?

ສະພາວະທຳທີ່ບໍ່ມີປັດໄຈປຸງແຕ່ງ ຊື່ວ່າບໍ່ຖືກປັດໄຈປຸງແຕ່ງ

## ໓. ສະນິທັດສະນະທຸກະ

[໑໐໘໓] ສະພາວະທຳທີ່ເຫັນໄດ້ ເປັນແນວໃດ?

ຮູປາຍະຕະນະ ສະພາວະທຳເຫຼົ່ານີ້ຊື່ວ່າເຫັນໄດ້

[໑໐໘໔] ສະພາວະທຳທີ່ເຫັນບໍ່ໄດ້ ເປັນແນວໃດ?

ຈັກຂາຍະຕະນະ ฯລฯ ໂຜດຖັບພາຍະຕະນະ ເວທະນາຂັນ ฯລฯ ວິນຍານຂັນຮູບທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ ເຊິ່ງນັບເນື່ອງໃນທຳມາຍະຕະນະ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າເຫັນບໍ່ໄດ້

## ໔. ສັບປະຕິຄະທຸກະ

[໑໐໘໕] ສະພາວະທຳທີ່ກະທົບໄດ້ ເປັນແນວໃດ?

ຈັກຂາຍະຕະນະ ฯລฯ ໂຜດຖັບພາຍະຕະນະ ສະພາວະທຳເຫຼົ່ານີ້ຊື່ວ່າກະທົບໄດ້

[໑໐໘໖] ສະພາວະທຳທີ່ກະທົບບໍ່ໄດ້ ເປັນແນວໃດ?

ເວທະນາຂັນ ฯລฯ ວິນຍານຂັນ ຮູບທີ່ເຫັນບໍ່ໄດ້ແລະກະທົບບໍ່ໄດ້ ເຊິ່ງນັບເນື່ອງໃນທຳມາຍະຕະນະ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າກະທົບບໍ່ໄດ້

## ໕. ຣູປີທຸກະ

[໑໐໘໗] ສະພາວະທຳທີ່ເປັນຮູບ ເປັນແນວໃດ?

ມະຫາພູຕະຮູບ ໔ ແລະຮູບທີ່ອາໄສມະຫາພູຕະຮູບ ໔ ສະພາວະທຳເຫຼົ່ານີ້ຊື່ວ່າເປັນຮູບ

[໑໐໘໙] ສະພາວະທຳທີ່ບໍ່ເປັນຮູບ ເປັນແນວໃດ?

ເວທະນາຂັນ ฯລฯ ວິນຍານຂັນ ແລະທາດທີ່ປັດໄຈບໍ່ປຸງແຕ່ງສະພາວະທຳເຫຼົ່ານີ້ຊື່ວ່າບໍ່ເປັນຮູບ

## ໖. ໂລກິຍະທຸກະ

[໑໐໘໘] ສະພາວະທຳທີ່ເປັນໂລກິຍະ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ฯລฯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນໂລກິຍະ

[໑໑໐໐] ສະພາວະທຳທີ່ເປັນໂລກຸດຕະຣະ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງສະພາວະທຳເຫຼົ່ານີ້ຊື່ວ່າເປັນໂລກຸດຕະຣະ

## ຊ. ເກນະຈິວິນເຍີຍຍະທຸກະ

[໑໑໐໑] ສະພາວະທຳທີ່ຈິດບາງດວງຮູ້ໄດ້ແລະທີ່ຈິດບາງດວງຮູ້ບໍ່ໄດ້ ເປັນແນວໃດ?

ສະພາວະທຳທີ່ຈັກຂຸວິນຍານຮູ້ໄດ້ແຕ່ໂສຕະວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ໂສຕະວິນຍານຮູ້ໄດ້ແຕ່ຈັກຂຸວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ຈັກຂຸວິນຍານຮູ້ໄດ້ແຕ່ຄານະວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ຄານະວິນຍານຮູ້ໄດ້ແຕ່ຈັກຂຸວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ຈັກຂຸວິນຍານຮູ້ໄດ້ແຕ່ຊິວຫາວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ຊິວຫາວິນຍານຮູ້ໄດ້ແຕ່ຈັກຂຸວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ຈັກຂຸວິນຍານຮູ້ໄດ້ແຕ່ກາຍວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ກາຍວິນຍານຮູ້ໄດ້ແຕ່ຈັກຂຸວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ໂສຕະວິນຍານຮູ້ໄດ້ແຕ່ຄານະວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ຄານະວິນຍານຮູ້ໄດ້ແຕ່ໂສຕະວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ໂສຕະວິນຍານຮູ້ໄດ້ແຕ່ຊິວຫາວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ຊິວຫາວິນຍານຮູ້ໄດ້ແຕ່ໂສຕະວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ໂສຕະວິນຍານຮູ້ໄດ້ແຕ່ກາຍວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ກາຍວິນຍານຮູ້ໄດ້ແຕ່ໂສຕະວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ໂສຕະວິນຍານຮູ້ໄດ້ແຕ່ຈັກຂຸວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ຈັກຂຸວິນຍານຮູ້ໄດ້ແຕ່ໂສຕະວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ຄານະວິນຍານຮູ້ໄດ້ແຕ່ຊິວຫາວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ຊິວຫາວິນຍານຮູ້ໄດ້ແຕ່ຄານະວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ຄານະວິນຍານຮູ້ໄດ້ແຕ່ກາຍວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ກາຍວິນຍານຮູ້ໄດ້ແຕ່ຄານະວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ຄານະວິນຍານຮູ້ໄດ້ແຕ່ຈັກຂຸວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ຈັກຂຸວິນຍານຮູ້ໄດ້ແຕ່ຄານະວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ຄານະວິນຍານຮູ້ໄດ້ແຕ່ໂສຕະວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ໂສຕະວິນຍານທີ່ຮູ້ໄດ້ແຕ່ຄານະວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ຊິວຫາວິນຍານຮູ້ໄດ້ແຕ່ກາຍວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ກາຍວິນຍານຮູ້ໄດ້ແຕ່ຊິວຫາວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ຊິວຫາວິນຍານຮູ້ໄດ້ແຕ່ຈັກຂຸວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ຈັກຂຸວິນຍານຮູ້ໄດ້ແຕ່ຊິວຫາວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ຊິວຫາວິນຍານຮູ້ໄດ້ແຕ່ໂສຕະວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ໂສຕະວິນຍານຮູ້ໄດ້ແຕ່ຊິວຫາວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ຊິວຫາວິນຍານຮູ້ໄດ້ແຕ່ຄານະວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ຄານະວິນຍານຮູ້ໄດ້ແຕ່ຊິວຫາວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ກາຍວິນຍານຮູ້ໄດ້ແຕ່ຈັກຂຸວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ຈັກຂຸວິນຍານຮູ້ໄດ້ແຕ່ກາຍວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ກາຍວິນຍານຮູ້ໄດ້ແຕ່ໂສຕະວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ໂສຕະວິນຍານຮູ້ໄດ້ແຕ່ກາຍວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ກາຍວິນຍານຮູ້ໄດ້ແຕ່ຄານະວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ຄານະວິນຍານຮູ້ໄດ້ແຕ່ກາຍວິນຍານຮູ້ບໍ່ໄດ້

ສະພາວະທຳທີ່ກາຍວິນຍານທີ່ຮູ້ໄດ້ແຕ່ຊິວຫາວິນຍານຮູ້ບໍ່ໄດ້ ຫຼື ສະພາວະທຳທີ່ ຊິວຫາວິນຍານຮູ້ໄດ້ແຕ່ກາຍວິນຍານຮູ້ບໍ່ໄດ້

ສະພາວະທຳເຫຼົ່ານີ້ຮຽກວ່າຈິດບາງດວງຮູ້ໄດ້ ແລະທີ່ຈິດບາງດວງຮູ້ບໍ່ໄດ້

**ຈູລັນຕະຣະທຸກະ ຈົບ**

## ໓. ອາສະວະໂຄດສະກະ

### ໑. ອາສະວະທຸກະ

[໑໑໐໘] ສະພາວະທຳທີ່ເປັນອາສະວະ ເປັນແນວໃດ?

ອາສະວະ ໔ ຄື

໑. ກາມາສະວະ
໒. ພະວາສະວະ
໓. ທິດຖາສະວະ
໔. ອະວິດຊາສະວະ

[໑໑໐໙] ບັນດາອາສະວະ ໔ ນັ້ນ ກາມາສະວະ ເປັນແນວໃດ?

ຄວາມພໍໃຈໃນກາມ ຄວາມກຳໜັດໃນກາມ ຄວາມເພີດເພີນໃນກາມ ຕັນຫາໃນ ກາມ ສິເນຫາໃນກາມ ຄວາມຮ້ອນຮົນຍ້ອນກາມ ຄວາມລຸ່ມຫຼົງໃນກາມ ຄວາມມົກມຸ້ນໃນກາມ ໃນກາມທັງຫຼາຍ ນີ້ຮຽກວ່າ ກາມາສະວະ

[໑໑໐໔] ພະວາສະວະ ເປັນແນວໃດ?

ຄວາມພໍໃຈໃນພົບ ຄວາມກໍາໜັດໃນພົບ ຄວາມເພີດເພີນໃນພົບ ຕັນຫາໃນພົບ ສິເນຫາໃນພົບ ຄວາມຮ້ອນຮົນຍ້ອນພົບ ຄວາມລຸ່ມຫຼົງໃນພົບ ຄວາມມົກມຸ້ນໃນພົບ ໃນພົບທັງຫຼາຍ ນີ້ຮຽກວ່າພະວາສະວະ

[໑໑໐໕] ທິດຖາສະວະ ເປັນແນວໃດ?

ຄວາມເຫັນວ່າ ໂລກທ່ຽງ ໂລກບໍ່ທ່ຽງ ໂລກມີບ່ອນສຸດ ໂລກບໍ່ມີບ່ອນສຸດ ຊີວະກັບສະຣີຣະ ເປັນຢ່າງດຽວກັນ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ດັ່ງນີ້ ທິດຖິຄວາມເຫັນຜິດ ປ່າຮົກຄືທິດຖິ ກັນດານຄືທິດຖິ ຄວາມເຫັນເປັນຂ້າເສິກຕໍ່ສໍາມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຍຶດຖື ຄວາມຍຶດໝັ້ນ ຄວາມຕັ້ງໝັ້ນ ຄວາມຖືຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິທີ່ເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າທິດຖາສະວະ ມິດສາທິດຖິແມ່ນທັງໝົດຊື່ວ່າ ທິດຖາສະວະ

[໑໑໐໖] ອະວິດຊາສະວະ ເປັນແນວໃດ?

ຄວາມບໍ່ຮູ້ໃນທຸກ ຄວາມບໍ່ຮູ້ໃນທຸກຂະສະມຸໄທ ຄວາມບໍ່ຮູ້ໃນທຸກຂະນິໂຣທະ ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ຄວາມບໍ່ຮູ້ໃນສ່ວນອະດີດ ຄວາມບໍ່ຮູ້ໃນສ່ວນອະນາຄົດ ຄວາມບໍ່ຮູ້ໃນສ່ວນອະດີດແລະອະນາຄົດ ຄວາມບໍ່ຮູ້ໃນປະຕິດຈະສະມຸບບາດວ່າ ຍ້ອນທໍານີ້ເປັນປັດໄຈ ທໍານີ້ຈຶ່ງມີ ຄວາມບໍ່ຮູ້ ຄວາມບໍ່ເຫັນ ຄວາມບໍ່ຕັດສະຮູ້ ຄວາມບໍ່ຮູ້ໂດຍສົມຄວນ ຄວາມບໍ່ຮູ້ຕາມເປັນຈິງ ຄວາມບໍ່ແທງຕະຫຼອດ ຄວາມບໍ່ຖືເອົາໂດຍຖືກຕ້ອງ ຄວາມບໍ່ຢັ່ງລົງໂດຍຮອບຄອບ ຄວາມບໍ່ພິນິດ ຄວາມບໍ່ພິຈາລະນາ ຄວາມບໍ່ເຮັດໃຫ້ປະຈັກ ຄວາມຊາມ ປັນຍາ ຄວາມໂງ່ຈ້າ ຄວາມບໍ່ຮູ້ແຈ້ງ ຄວາມຫຼົງ ຄວາມຫຼຸ່ມຫຼົງ ຄວາມຫຼົງໃຫຼ ອະວິດຊາ ໂອຄະຄືອະວິດຊາ ໂຍຄະຄືອະວິດຊາ ອະນຸໄສຄືອະວິດຊາ ປະຣິຍຸດຖານຄືອະວິດຊາ ຫຼີ່ມຄືອະວິດຊາ ອະກຸສົນມູນຄືໂມຫະ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າອະວິດຊາສະວະ

ສະພາວະທໍາເຫຼົ່ານີ້ຊື່ວ່າທໍາທີ່ເປັນອາສະວະ

[໑໑໐໗] ສະພາວະທໍາທີ່ບໍ່ເປັນອາສະວະ ເປັນແນວໃດ?

ເວັ້ນສະພາວະທໍາທີ່ເປັນອາສະວະເຫຼົ່ານັ້ນແລ້ວ ສະພາວະທໍາທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອ ເຊິ່ງເປັນກາມາວະຈອນ ຣູບປາວະຈອນ ອະຣູບປາວະຈອນແລະ ທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ຣູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທໍາເຫຼົ່ານີ້ຊື່ວ່າ ບໍ່ເປັນອາສະວະ

## ໔. ສາສະວະທຸກະ

[໑໑໐໗] ສະພາວະທຳທີ່ເປັນອາລົມຂອງອາສະວະ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ຮູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອາລົມຂອງອາສະວະ

[໑໑໐໘] ສະພາວະທຳທີ່ບໍ່ເປັນອາລົມຂອງອາສະວະ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນອາລົມຂອງອາສະວະ

## ໙. ອາສະວະສຳປະຍຸດຕະທຸກະ

[໑໑໑໐] ສະພາວະທຳທີ່ສຳປະຍຸດດ້ວຍອາສະວະ ເປັນແນວໃດ?

ສະພາວະທຳທີ່ສຳປະຍຸດດ້ວຍອາສະວະ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍອາສະວະ

[໑໑໑໑] ສະພາວະທຳທີ່ວິບປະຍຸດຈາກອາສະວະ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກອາສະວະ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກອາສະວະ

## ໔. ອາສະວະສາສະວະທຸກະ

[໑໑໑໔] ສະພາວະທຳທີ່ເປັນອາສະວະແລະເປັນອາລົມຂອງອາສະວະ ເປັນແນວໃດ?

ສະພາວະທຳທີ່ເປັນອາສະວະຊື່ວ່າເປັນອາສະວະແລະເປັນອາລົມຂອງອາສະວະ

[໑໑໑໙] ສະພາວະທຳທີ່ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ ເປັນແນວໃດ?

ສະພາວະທຳເປັນອາລົມຂອງອາສະວະ ເວັ້ນອາສະວະເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະທີ່ເຫຼືອເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອາລົມຂອງອາສະວະແຕ່ບໍ່ເປັນອາສະວະ

## ໕. ອາສະວະອາສະວະສຳປະຍຸດຕະທຸກະ

[໑໑໑໔] ສະພາວະທຳທີ່ເປັນອາສະວະແລະສຳປະຍຸດດ້ວຍອາສະວະ ເປັນແນວໃດ?

ກາມາສະວະເປັນອາສະວະ ແລະສຳປະຍຸດດ້ວຍອາສະວະຍ້ອນອະວິດຊາສະວະ ອະວິດຊາສະວະ ເປັນອາສະວະ ແລະສຳປະຍຸດດ້ວຍອາສະວະຍ້ອນກາມາສະວະ ພະວາສະວະເປັນອາສະວະແລະສຳປະຍຸດດ້ວຍອາສະວະ ຍ້ອນອະວິດຊາສະວະ ອະວິດຊາສະວະເປັນອາສະວະ ແລະສຳປະຍຸດດ້ວຍອາສະວະ ຍ້ອນພະວາສະວະ ທິດຖາສະວະເປັນອາສະວະ ແລະສຳປະຍຸດດ້ວຍອາສະວະຍ້ອນອະວິດຊາສະວະ ອະວິດຊາສະວະເປັນອາສະວະແລະສຳປະຍຸດດ້ວຍອາສະວະຍ້ອນທິດຖາສະວະ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອາສະວະແລະສຳປະຍຸດດ້ວຍອາສະວະ

[໑໑໑໕] ສະພາວະທຳທີ່ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນອາສະວະເຫຼົ່ານັ້ນແລ້ວ ສະພາວະທຳທີ່ສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າສຳປະຍຸດດ້ວຍອາສະວະແຕ່ບໍ່ເປັນອາສະວະ

## ໖. ອາສະວະວິບປະຍຸດຕະສາສະວະທຸກະ

[໑໑໑໖] ສະພາວະທຳທີ່ວິບປະຍຸດຈາກອາສະວະ ແຕ່ເປັນອາລົມຂອງອາສະວະເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ ໄດ້ແກ່ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກອາສະວະແຕ່ເປັນອາລົມຂອງອາສະວະ

[໑໑໑໗] ສະພາວະທຳທີ່ວິບປະຍຸດຈາກອາສະວະ ແລະບໍ່ເປັນອາລົມຂອງອາສະວະ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກອາສະວະ ແລະບໍ່ເປັນອາລົມຂອງອາສະວະ

**ອາສະວະໂຄດສະກະ ຈົບ**

**ປະຖົມພານະວານໃນນິກເຂປະກັນ ຈົບ**

# ໔. ສັນໂຍຊະນະໂຄດສະກະ

## ໑. ສັນໂຍຊະນະທຸກະ

[໑໑໗໘] ສະພາວະທຳທີ່ເປັນສັງໂຍດ ເປັນແນວໃດ?

ສັງໂຍດ ໑໐ ຄື

໑. ກາມະຣາຄະສັງໂຍດ
໒. ປະຕິຄະສັງໂຍດ
໓. ມານະສັງໂຍດ
໔. ທິດຖິສັງໂຍດ
໕. ວິຈິກິດສາສັງໂຍດ
໖. ສີລັບພະຕະປະຣາມາສະສັງໂຍດ
໗. ພະວະຣາຄະສັງໂຍດ
໘. ອິດສາສັງໂຍດ
໙. ມັດສະຣິຍະສັງໂຍດ
໑໐. ອະວິດຊາສັງໂຍດ

[໑໑໗໙] ບັນດາສັງໂຍດ ໑໐ ນັ້ນ ກາມະຣາຄະສັງໂຍດ ເປັນແນວໃດ?

ຄວາມພໍໃຈໃນກາມ ຄວາມກຳໜັດໃນກາມ ຄວາມເພີດເພີນໃນກາມ ຕັນຫາໃນກາມ ສິເນຫາໃນກາມ ຄວາມຮ້ອນຮົນຍ້ອນກາມ ຄວາມລຸ່ມຫຼົງໃນກາມ ຄວາມມົກມຸ້ນໃນກາມໃນກາມທັງຫຼາຍ ນີ້ຮຽກວ່າກາມະຣາຄະສັງໂຍດ

[໑໑໘໐] ປະຕິຄະສັງໂຍດ ເປັນແນວໃດ?

ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ກຳລັງທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ຈັກທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມເສື່ອມເສຍ ຯລຯ ກຳລັງທຳຄວາມ ເສື່ອມເສຍ ຯລຯ ຈັກທຳຄວາມເສື່ອມເສຍແກ່ຄົນຜູ້ເປັນທີ່ຮັກທີ່ຮັກແພງຂອງເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມຈະເລີນ ຯລຯ ກຳລັງທຳຄວາມຈະເລີນ ຯລຯ ຈັກທຳຄວາມຈະເລີນແກ່ຄົນຜູ້ບໍ່ເປັນທີ່ຮັກບໍ່ເປັນທີ່ຮັກແພງຂອງເຮົາ ຫຼື ຄວາມອາຄາດເກີດຂຶ້ນໃນຖານະອັນບໍ່ສົມຄວນ ຈິດອາຄາດ ຄວາມຂັດເຄືອງ ຄວາມກະທົບກະທັ່ງ ຄວາມແຄ້ນ ຄວາມເຄືອງ ຄວາມຂຸ່ນເຄືອງ ຄວາມດິ້ນຮົນ ໂທສະ ຄວາມຄິດປະທຸດສະຮ້າຍ ຄວາມຄິດມຸ້ງຮ້າຍ ຄວາມຂຸ່ນຈິດ ທຳມະຊາດທີ່ປະທຸດສະຮ້າຍໃຈ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ມີລັກສະນະເຊັ່ນວ່ານີ້ (ແລະ) ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມພິໂຣດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າປະຕິຄະສັງໂຍດ

[໑໑໔໑] ມານະສັງໂຍດ ເປັນແນວໃດ?

ຄວາມຖືຕົວວ່າ ເຮົາດີກວ່າເຂົາ ເຮົາສະເໝີກັບເຂົາ ເຮົາຊົ່ວກວ່າເຂົາ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມຍົກຕົນ ຄວາມອວດຕົນ ຄວາມເຊີດຊູຕົນເໝືອນທຸງ ຄວາມຍົກຕົນຂຶ້ນ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຊື່ວ່າມານະສັງໂຍດ

[໑໑໔໘] ທິດຖິສັງໂຍດ ເປັນແນວໃດ?

ຄວາມເຫັນວ່າໂລກທ່ຽງ ໂລກບໍ່ທ່ຽງ ໂລກມີບ່ອນສຸດ ໂລກບໍ່ມີບ່ອນສຸດ ຊີວະກັບສະຣີຣະເປັນຢ່າງດຽວກັນ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ດັ່ງນີ້ ທິດຖິ ຄວາມເຫັນຜິດ ປ່າຮົກຄືທິດຖິ ກັນດານຄືທິດຖິ ຄວາມເຫັນເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຢຶດຖື ຄວາມຢຶດໝັ້ນ ຄວາມຕັ້ງໝັ້ນ ຄວາມຖືຜິດ ທາງຊົ່ວທາງຜິດ ພາວະທີ່ຜິດ ລັດທິເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າທິດຖິສັງໂຍດ ເວັ້ນສີລັບພະຕະປະຣາມາສະສັງໂຍດແລ້ວ ຄວາມເຫັນຜິດແມ່ນທັງໝົດຊື່ວ່າທິດຖິສັງໂຍດ

[໑໑໔໙] ວິຈິກິດສາສັງໂຍດ ເປັນແນວໃດ?

ປຸຖຸຊົນຍ່ອມເຄືອບແຄງສົງໄສໃນພຣະສາດສະດາ ໃນພຣະທຳໃນພຣະສົງ ໃນສິກຂາ ໃນສ່ວນອະດີດ ໃນສ່ວນອະນາຄົດ ໃນສ່ວນອະດີດແລະສ່ວນອະນາຄົດ ໃນປະຕິດຈະສະມຸບບາດວ່າຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຄວາມເຄືອບແຄງ ກິຣິຍາທີ່ເຄືອບແຄງ ພາວະທີ່ເຄືອບແຄງ ຄວາມຄິດເຫັນໄປຕ່າງ ໆ ຄວາມຕັດສິນອາລົມບໍ່ໄດ້ ຄວາມເຫັນເປັນສອງທາງ ຄວາມເຫັນ ເໝືອນທາງສອງແຍກ ຄວາມສົງໄສ ຄວາມບໍ່ສາມາດຖືເອົາໂດຍສ່ວນດຽວໄດ້ ຄວາມຄິດສ່າຍໄປ ຄວາມຄິດມົວໄປ ຄວາມບໍ່ສາມາດຢັ່ງລົງຖືເອົາເປັນຍຸດຕິໄດ້ ຄວາມກະດ້າງແຫ່ງຈິດ ຄວາມລັງເລໃຈ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າວິຈິກິດສາສັງໂຍດ

[໑໑໕໐] ສີລັບພະຕະປະຣາມາສະສັງໂຍດ ເປັນແນວໃດ?

ສະມະນະພາມພາຍນອກ ແຕ່ສາດສະໜານີ້ມີຄວາມເຫັນວ່າ ຄວາມບໍລິສຸດຍ່ອມມີດ້ວຍສີນດ້ວຍພົດ ດ້ວຍສີນແລະພົດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ປ່າຮົກຄືທິດຖິ ກັນດານຄື ທິດຖິ ຄວາມເຫັນເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຢຶດຖື ຄວາມຢຶດໝັ້ນ ຄວາມຕັ້ງໝັ້ນ ຄວາມຖືຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກ ວ່າສີລັບພະຕະປະຣາມາສະສັງໂຍດ

[๑๑๘๕] ພະວະຣາຄະສັງໂຍດ ເປັນແນວໃດ?

ຄວາມພໍໃຈໃນພົບ ຄວາມກໍາໜັດໃນພົບ ຄວາມເພີດເພີນໃນພົບ ຕັນຫາໃນພົບ ສິເນຫາໃນພົບ ຄວາມຮ້ອນຮົນຍ້ອນພົບ ຄວາມລຸ່ມຫຼົງໃນພົບ ຄວາມມົກມຸ້ນໃນພົບ ໃນພົບທັງຫຼາຍ ນີ້ຮຽກວ່າ ພະວະຣາຄະສັງໂຍດ

[๑๑๘๖] ອິດສາສັງໂຍດ ເປັນແນວໃດ?

ຄວາມຣິດສະຫຍາ ກິຣິຍາທີ່ຣິດສະຫຍາ ພາວະທີ່ຣິດສະຫຍາ ຄວາມກິດກັນ ກິຣິຍາທີ່ກີດກັນພາວະ ທີ່ກີດກັນໃນລາບສັກກາຣະ ຄວາມເຄົາຣົບ ນັບຖື ໄຫວ້ ແລະບູຊາຂອງຄົນອື່ນນີ້ຊື່ວ່າອິດສາສັງໂຍດ

[๑๑๘๗] ມັດສະຣິຍະສັງໂຍດ ເປັນແນວໃດ?

ມັດສະຣິຍະ ๕ ຄື

๑. ອາວາສະມັດສະຣິຍະ (ຫວງບ່ອນຢູ່)
๒. ກຸລະມັດສະຣິຍະ (ຫວງຕະກູນ)
๓. ລາພະມັດສະຣິຍະ (ຫວງລາບ)
๔. ວັນນະມັດສະຣິຍະ (ຫວງວັນນະ)
๕. ທໍາມະມັດສະຣິຍະ (ຫວງທໍາ)

ຄວາມຫວງ ກິຣິຍາທີ່ຫວງ ພາວະທີ່ຫວງ ຄວາມຫວງແຫນ ຄວາມໜຽວແໜ້ນ ຄວາມບໍ່ເອື້ອເຟື້ອ ຄວາມບໍ່ເຜື່ອແຜ່ແຫ່ງຈິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າມັດສະຣິຍະ ສັງໂຍດ

[๑๑๘๘] ອະວິດຊາສັງໂຍດ ເປັນແນວໃດ?

ຄວາມບໍ່ຮູ້ໃນທຸກ ຄວາມບໍ່ຮູ້ໃນທຸກຂະສະມຸໄທ ຄວາມບໍ່ຮູ້ໃນທຸກຂະນິໂຣທະ ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ຄວາມບໍ່ຮູ້ໃນສ່ວນອະດີດ ຄວາມບໍ່ຮູ້ໃນສ່ວນອະນາຄົດ ຄວາມບໍ່ຮູ້ໃນສ່ວນອະດີດແລະສ່ວນອະນາຄົດ ຄວາມບໍ່ຮູ້ໃນປະຕິດຈະສະມຸບ ບາດວ່າ ຍ້ອນທໍານີ້ເປັນປັດໄຈ ທໍານີ້ຈຶ່ງມີ ຄວາມບໍ່ຮູ້ ຄວາມບໍ່ເຫັນ ຄວາມບໍ່ຕັດສະຮູ້ ຄວາມບໍ່ຮູ້ໂດຍສົມຄວນ ຄວາມບໍ່ຮູ້ຕາມເປັນຈິງ ຄວາມບໍ່ແທງຕະຫຼອດ ຄວາມບໍ່ຖືເອົາໃຫ້ຖືກຕ້ອງ ຄວາມບໍ່ຢັ່ງລົງໂດຍຮອບຄອບ ຄວາມບໍ່ພິນິດ ຄວາມບໍ່ພິຈາລະນາ ຄວາມບໍ່ເຮັດໃຫ້ປະຈັກ ຄວາມຊາມປັນຍາ ຄວາມໂງ່ຈ້າ ຄວາມບໍ່ຮູ້ແຈ້ງ ຄວາມຫຼົງ ຄວາມລຸ່ມຫຼົງ ຄວາມຫຼົງໃຫຼ ອະວິດຊາ ໂອຄະຄືອະວິດຊາ ອະນຸໄສຄືອະວິດຊາ ປະຣິຍຸດຖານຄືອະວິດຊາ ຫຼິ້ມຄືອະວິດຊາ ອະກຸສົນມູນຄືໂມຫະ ນີ້ຮຽກວ່າອະວິດຊາສັງໂຍດ

ສະພາວະທໍາເຫຼົ່ານີ້ຊື່ວ່າ ເປັນສັງໂຍດ

[໑໑໔໙] ສະພາວະທຳທີ່ບໍ່ເປັນສັງໂຍດ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນສັງໂຍດເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນແລະອັບພະຍາກະຕະທີ່ເຫຼືອ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນ ວັດຕະທຸກ ໄດ້ແກ່ ເວທະນາຂັນ ฯລฯ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນສັງໂຍດ

## ໔. ສັນໂຍຊະນິຍະທຸກະ

[໑໑໕໐] ສະພາວະທຳທີ່ເປັນອາລົມຂອງສັງໂຍດ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ฯລฯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອາລົມຂອງສັງໂຍດ

[໑໑໕໑] ສະພາວະທຳທີ່ບໍ່ເປັນອາລົມຂອງສັງໂຍດ ເປັນແນວໃດ?

ມັກ ຜົນຂອງມັກ ທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນອາລົມຂອງສັງໂຍດ

## ໕. ສັນໂຍຊະນະສຳປະຍຸດຕະທຸກະ

[໑໑໕໔] ສະພາວະທຳທີ່ສຳປະຍຸດດ້ວຍສັງໂຍດ ເປັນແນວໃດ?

ສະພາວະທຳທີ່ສຳປະຍຸດດ້ວຍສັງໂຍດ ໄດ້ແກ່ ເວທະນາຂັນ ฯລฯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍສັງໂຍດ

[໑໑໕໕] ສະພາວະທຳທີ່ວິບປະຍຸດຈາກສັງໂຍດ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກສັງໂຍດເຫຼົ່ານັ້ນ ໄດ້ແກ່ ເວທະນາຂັນ ແລະອື່ນ ໆ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າວິບປະຍຸດຈາກສັງໂຍດ

## ໖. ສັນໂຍຊະນະສັນໂຍຊະນິຍະທຸກະ

[໑໑໕໔] ສະພາວະທຳທີ່ເປັນສັງໂຍດແລະເປັນອາລົມຂອງສັງໂຍດ ເປັນແນວໃດ?

ສະພາວະທຳທີ່ເປັນສັງໂຍດຊື່ວ່າເປັນສັງໂຍດແລະເປັນອາລົມຂອງສັງໂຍດ

[໑໑໕໘] ສະພາວະທຳທີ່ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດ ເປັນເຫດໃດ

ສະພາວະທຳທີ່ເປັນອາລົມຂອງສັງໂຍດ ເວັ້ນສະພາວະທຳທີ່ເປັນສັງໂຍດແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະທີ່ເຫຼືອ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ໗ລ໗ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອາລົມຂອງສັງໂຍດແຕ່ບໍ່ເປັນສັງໂຍດ

## ໕. ສັນໂຍຊະນະສັນໂຍຊະນະສຳປະຍຸດຕະທຸກະ

[໑໑໘໖] ສະພາວະທຳທີ່ເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດ ເປັນແນວໃດ?

ການຣາຄະສັງໂຍດເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດຍ້ອນອະວິດຊາສັງໂຍດ ອະວິດຊາສັງໂຍດເປັນສັງໂຍດ ແລະສຳປະຍຸດດ້ວຍສັງໂຍດຍ້ອນການຣາຄະສັງໂຍດ ປະຕິຄະສັງໂຍດເປັນສັງໂຍດ ແລະສຳປະຍຸດດ້ວຍສັງໂຍດຍ້ອນອະວິດຊາສັງໂຍດ ອະວິດຊາສັງໂຍດເປັນສັງໂຍດ ແລະສຳປະຍຸດດ້ວຍສັງໂຍດຍ້ອນປະຕິຄະສັງໂຍດ ມານະສັງໂຍດເປັນສັງໂຍດ ແລະສຳປະຍຸດດ້ວຍສັງໂຍດຍ້ອນອະວິດຊາສັງໂຍດ ອະວິດຊາສັງໂຍດເປັນສັງໂຍດແລະ ສຳປະຍຸດດ້ວຍສັງໂຍດຍ້ອນມານະສັງໂຍດ ທິດຖິສັງໂຍດເປັນສັງໂຍດ ແລະສຳປະຍຸດດ້ວຍສັງໂຍດຍ້ອນອະວິດຊາສັງໂຍດ ອະວິດຊາສັງໂຍດເປັນສັງໂຍດ ແລະສຳປະຍຸດດ້ວຍສັງໂຍດຍ້ອນທິດຖິສັງໂຍດ ວິຈິກິດສາສັງໂຍດເປັນສັງໂຍດ ແລະສຳປະຍຸດດ້ວຍສັງໂຍດຍ້ອນ ອະວິດຊາສັງໂຍດ ອະວິດຊາສັງໂຍດເປັນສັງໂຍດ ແລະສຳປະຍຸດດ້ວຍສັງໂຍດຍ້ອນວິຈິກິດສາສັງໂຍດ ສີລັບພະຕະປະຣາມາສະສັງໂຍດເປັນສັງໂຍດ ແລະສຳປະຍຸດດ້ວຍສັງໂຍດ ຍ້ອນອະວິດຊາສັງໂຍດ ອະວິດຊາສັງໂຍດເປັນສັງໂຍດ ແລະສຳປະຍຸດດ້ວຍສັງໂຍດຍ້ອນສີລັບພະຕະປະຣາມາສະສັງໂຍດ ພະວະຣາຄະສັງໂຍດເປັນສັງໂຍດ ແລະສຳປະຍຸດດ້ວຍສັງໂຍດຍ້ອນອະວິດຊາສັງໂຍດ ອະວິດຊາສັງໂຍດເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດຍ້ອນພະວະຣາຄະສັງໂຍດ ອິດສາສັງໂຍດເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດຍ້ອນອະວິດຊາສັງໂຍດ ອະວິດຊາສັງໂຍດເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດຍ້ອນອິດສາສັງໂຍດ ມັດສະຣິຍະສັງໂຍດເປັນສັງໂຍດ ແລະສຳປະຍຸດດ້ວຍສັງໂຍດຍ້ອນອະວິດຊາສັງໂຍດ ອະວິດຊາສັງໂຍດເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດຍ້ອນມັດສະຣິຍະສັງໂຍດ ສະພາວະທຳເຫຼົ່ານີ້ຊື່ວ່າເປັນສັງໂຍດແລະສຳປະຍຸດດ້ວຍສັງໂຍດ

[໑໑໘໗] ສະພາວະທຳທີ່ສຳປະຍຸດດ້ວຍສັງໂຍດແຕ່ບໍ່ເປັນສັງໂຍດ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນສັງໂຍດເຫຼົ່ານັ້ນແລ້ວ ສະພາວະທຳທີ່ສຳປະຍຸດດ້ວຍສັງໂຍດ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍ ສັງໂຍດແຕ່ບໍ່ເປັນສັງໂຍດ

## ໖. ສັນໂຍຊະນະວິບປະຍຸດຕະສັນໂຍຊະນິຍະທຸກະ

[໑໑໓໙] ສະພາວະທຳທີ່ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ ຄື ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະເປັນກາມາວະຈອນ ຣູບປາວະຈອນ ແລະອະຣູບປາວະຈອນ ໄດ້ແກ່ ຣູບຂັນ ໆລໆ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກສັງໂຍດແຕ່ເປັນອາລົມຂອງສັງໂຍດ

[໑໑໓໘] ສະພາວະທຳທີ່ວິບປະຍຸດຈາກສັງໂຍດ ແລະບໍ່ເປັນອາລົມຂອງສັງໂຍດ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກສັງໂຍດ ແລະບໍ່ເປັນອາລົມຂອງສັງໂຍດ

**ສັນໂຍຊະນະໂຄດສະກະ ຈົບ**

## ໔. ຄັນຖະໂຄດສະກະ

## ໑. ຄັນຖະທຸກະ

[໑໑໔໐] ສະພາວະທຳທີ່ເປັນຄັນຖະ ເປັນແນວໃດ?

ຄັນຖະ ໔ ຄື

໑. ອະພິດຊາກາຍະຄັນຖະ

໒. ພະຍາປາທະກາຍະຄັນຖະ

໓. ສີລັບພະຕະປະຣາມາສະ ກາຍະຄັນຖະ

໔. ອິທັງສັດຈາພິນິເວສະຍະຄັນຖະ

[໑໑໔໑] ບັນດາຄັນຖະ ໔ ນັ້ນ ອະພິດຊາກາຍະຄັນຖະ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັກແຮງກ້າ ຄວາມໄປຕາມອາລົມ ຄວາມຍິນດີ ຄວາມເພີດເພີນ ຄວາມກຳໜັດດ້ວຍອຳນາດຄວາມເພີດເພີນ ຄວາມກຳໜັກແຮງກ້າແຫ່ງຈິດ ຄວາມຢາກ ຄວາມສະຍົບ ຄວາມມົກມຸ້ນ ຄວາມຕ້ອງການ ຄວາມຮັກແພງ ຄວາມຂ້ອງຢູ່ ຄວາມຈົມຢູ່ ທຳມະຊາດທີ່ດຶງໄປ ທຳມະຊາດທີ່ຫຼອກລວງ ທຳມະຊາດທີ່ຍັງສັດໃຫ້ເກີດ ທຳມະຊາດທີ່ຍັງສັດໃຫ້ເກີດພ້ອມ ທຳມະຊາດທີ່ຮ້ອຍຮັດ ທຳມະຊາດທີ່ມີຂ່າຍ ທຳມະຊາດທີ່ກຳຊາບໃຈ ທຳມະຊາດທີ່ແຜ່ຊ່ານໄປ

ທຳມະຊາດເໝືອນເສັ້ນດ້າຍ ທຳມະຊາດທີ່ແຜ່ໄປ ທຳມະຊາດທີ່ປະມວນມາ ທຳມະຊາດເປັນເພື່ອນສອງ ປະນິທານ ທຳມະຊາດທີ່ນຳໄປສູ່ພົບ ຕັນຫາ ເໝືອນປ່າ ຕັນຫາ ເໝືອນດົງ ຄວາມກ່ຽວຂ້ອງ ຄວາມເຍື່ອໃຍ ຄວາມຫ່ວງໃຍ ຄວາມຜູກພັນ ຄວາມຫວັງ ກິຣິຍາທີ່ຫວັງ ພາວະທີ່ຫວັງ ຄວາມຫວັງຮູບ ຄວາມຫວັງສຽງ ຄວາມຫວັງກິ່ນ ຄວາມຫວັງຣົດ ຄວາມຫວັງໂຜດຖັບພະ ຄວາມຫວັງລາບ ຄວາມຫວັງຊັບ ຄວາມຫວັງບຸດ ຄວາມຫວັງຊີວິດ ທຳມະຊາດທີ່ຊິ່ມ ທຳມະຊາດທີ່ຊິ່ມທົ່ວ ທຳມະຊາດທີ່ຊິ່ມຍິ່ງ ຄວາມຊິ່ມ ກິຣິຍາທີ່ຊິ່ມ ພາວະທີ່ຊິ່ມ ຄວາມລະໂມບ ກິຣິຍາທີ່ລະໂມບ ພາວະທີ່ລະໂມບ ທຳມະຊາດເປັນເຫດຊຶມຊານໄປ ພາວະທີ່ຕ້ອງການແຕ່ອາລົມດີ ໆ ຄວາມກຳໜັດໃນຖານະ ອັນບໍ່ຄວນ ຄວາມໂລບເກີນພໍດີ ຄວາມຕິດໃຈ ກິຣິຍາທີ່ຕິດໃຈ ຄວາມປາຖະໜາ ຄວາມຍິນດີໃຈ ຄວາມປາຖະໜາຫຼາຍ ກາມຕັນຫາ ພະວະຕັນຫາ ວິພະວະຕັນຫາ ຮູບຕັນຫາ ອະຮູບຕັນຫາ ນິໂຣທະຕັນຫາ (ຄືຣາຄະທີ່ປະກອບດ້ວຍອຸດເສທະທິດຖິ) ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ ໂອຄະ ໂຍຄະ ຄັນຖະ ອຸປາທານ ອາວອນ ນິວອນ ເຄື່ອງປິດບັງ ເຄື່ອງຜູກ ອຸປະກິເລດ ອະນຸໄສ ປະຣິຍຸດຖານ ຕັນຫາເໝືອນເຄືອເຂົາ ຄວາມປາຖະໜາວັດຖຸມີປະການຕ່າງ ໆ ມູນເຫດແຫ່ງທຸກ ເຫດແຫ່ງທຸກ ແດນເກີດແຫ່ງທຸກ ບ່ວງແຫ່ງມານ ເບັດແຫ່ງມານ ວິໄສແຫ່ງມານ ຕັນຫາເໝືອນແມ່ນ້ຳ ຕັນຫາເໝືອນຂ່າຍ ຕັນຫາເໝືອນເຊືອກ ຕັນຫາເໝືອນມະຫາສະມຸດ ອະພິດຊາ ອະກຸສົນມູນຄືໂລພະ ນີ້ຮຽກວ່າ ອະພິດຊາກາຍະຄັນຖະ

[໑໑໔໘] ພະຍາປາທະກາຍະຄັນຖະ ເປັນແນວໃດ?

ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ກຳລັງທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ຈັກທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມເສື່ອມເສຍ ฯลฯ ກຳລັງທຳຄວາມເສື່ອມເສຍ ฯลฯ ຈັກທຳຄວາມເສື່ອມເສຍແກ່ຄົນທີ່ຮັກທີ່ຮັກແພງຂອງເຮົາຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມຈະເລີນ ฯลฯ ກຳລັງທຳຄວາມຈະເລີນ ฯลฯ ຈັກທຳຄວາມຈະເລີນແກ່ຄົນທີ່ບໍ່ເປັນທີ່ຮັກທີ່ບໍ່ຮັກແພງຂອງເຮົາ ຫຼື ຄວາມອາຄາດເກີດຂຶ້ນໃນຖານະອັນບໍ່ສົມຄວນ ຈິດອາຄາດ ຄວາມຂັດເຄືອງ ຄວາມກະທົບກະທັ່ງ ຄວາມແຄ້ນ ຄວາມເຄືອງ ຄວາມຂຸ່ນເຄືອງ ຄວາມດິ້ນຣົນ ໂທສະ ຄວາມຄິດປະທຸດສະຮ້າຍ ຄວາມຄິດມຸ້ງຮ້າຍ ຄວາມຂຸ່ນຈິດ ທຳມະຊາດ ທີ່ປະທຸດສະຮ້າຍໃຈ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ມີລັກສະນະເຊັ່ນວ່ານີ້ (ແລະ) ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມພິໂຣດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າພະຍາປາທະກາຍະຄັນຖະ

[໑໑໔໙] ສີລັບພະຕະປະຣາມາສະກາຍະຄັນຖະ ເປັນແນວໃດ?

ສະມະນະພາມພາຍນອກແຕ່ສາດສະໜານີ້ມີຄວາມເຫັນວ່າ ຄວາມບໍລິສຸດຍ່ອມມີໄດ້ດ້ວຍສີນ ດ້ວຍພົດ ດ້ວຍສີນແລະພົດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ປ່າຮົກຄືທິດຖິ ກັນດານຄື ທິດຖິ ຄວາມເຫັນເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຢຶດຖື ຄວາມຢຶດໝັ້ນ ຄວາມຕັ້ງໝັ້ນ ຄວາມຖືຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິອັນເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າສີລັບພະຕະປະຣາມາສະກາຍະຄັນຖະ

[໑໑໘໔] ອິທັງສັດຈາພິນິເວສະຍະຄັນຖະ ເປັນແນວໃດ?

ຄວາມເຫັນວ່າ ໂລກທ່ຽງ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ໂລກບໍ່ທ່ຽງ ນີ້ຈິງ ຢ່າງອື່ນເປັນໂມຄະ ໂລກມີບ່ອນສຸດ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ໂລກບໍ່ມີບ່ອນສຸດນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຊີວະກັບສະຣີຣະເປັນຢ່າງດຽວກັນ ນີ້ເທົ່ານັ້ນຈິງຢ່າງອື່ນເປັນໂມຄະ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ນີ້ເທົ່ານັ້ນຈິງ ຢ່າງອື່ນເປັນໂມຄະ ດັ່ງນີ້ ທິດຖິ ຄວາມເຫັນຜິດ ປ່າຮົກຄືທິດຖິ ກັນດານຄືທິດຖິ ຄວາມເຫັນເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຢຶດຖື ຄວາມຢຶດໝັ້ນ ຄວາມຕັ້ງໝັ້ນ ຄວາມຖືຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິອັນເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າອິທັງສັດຈາພິນິເວສະຍະຄັນຖະ ເວັ້ນສີລັບພະຕະປະຣາມາດ ກາຍະຄັນຖະແລ້ວ ມິດສາທິດຖິແມ່ນທັງໝົດຊື່ວ່າອິທັງສັດຈາພິນິເວສະຍະຄັນຖະ

ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນຄັນຖະ

[໑໑໘໕] ສະພາວະທຳທີ່ບໍ່ເປັນຄັນຖະ ເປັນແນວໃດ?

ເວັ້ນຄັນຖະເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກໄດ້ແກ່ເວທະນາຂັນ ໗ລ໗ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ເປັນຄັນຖະ

## ໔. ຄັນຖະນິຍະທຸກະ

[໑໑໘໖] ສະພາວະທຳທີ່ເປັນອາລົມຂອງຄັນຖະ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອາລົມຂອງຄັນຖະ

[໑໑໔໗] ສະພາວະທຳທີ່ບໍ່ເປັນອາລົມຂອງຄັນຖະ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນອັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນອາລົມຂອງຄັນຖະ

## ៣. ຄັນຖະສຳປະຍຸດຕະທຸກະ

[໑໑໔໘] ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະ ເປັນແນວໃດ?

ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະເຫຼົ່ານັ້ນ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າສຳປະຍຸດດ້ວຍຄັນຖະ

[໑໑໔໙] ສະພາວະທຳທີ່ວິບປະຍຸດຈາກຄັນຖະ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກຄັນຖະເຫຼົ່ານັ້ນ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກຄັນຖະ

## ໔. ຄັນຖະຄັນຖະນິຍະທຸກະ

[໑໑໕໐] ສະພາວະທຳທີ່ເປັນຄັນຖະແລະເປັນອາລົມຂອງຄັນຖະ ເປັນແນວໃດ?

ຄັນຖະເຫຼົ່ານັ້ນ ໆ ຊື່ວ່າ ເປັນຄັນຖະແລະເປັນອາລົມຂອງຄັນຖະ

[໑໑໕໑] ສະພາວະທຳທີ່ເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະ ເປັນແນວໃດ?

ເວັ້ນຄັນຖະເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນອາລົມຂອງຄັນຖະ ຄື ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະທີ່ເຫຼືອ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ຮູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນອາລົມຂອງຄັນຖະແຕ່ບໍ່ເປັນຄັນຖະ

## ໕. ຄັນຖະຄັນຖະສຳປະຍຸດຕະທຸກະ

[໑໑໕໔] ສະພາວະທຳທີ່ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ ເປັນແນວໃດ?

ສີລັບພະຕະປະຣາມາສະກາຍະຄັນຖະ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະຍ້ອນອະພິດຊາກາຍະຄັນຖະ ອະພິດຊາກາຍະຄັນຖະ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະຍ້ອນສີລັບພະຕະປະຣາມາສະກາຍະຄັນຖະ ອິທັງສັດຈາພິນິເວສະຍະຄັນຖະ ເປັນຄັນຖະແລະສຳປະຍຸດດ້ວຍ

ຄັນຖະຍ້ອນອະພິດຊາກາຍະຄັນຖະ ອະພິດຊາກາຍະຄັນຖະເປັນຄັນຖະແລະສຳປະຍຸດດ້ວຍຄັນຖະຍ້ອນອິທັງສັດຈາພິນິເວສະຍະຄັນຖະ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນຄັນຖະແລະສຳປະຍຸດດ້ວຍຄັນຖະ

[໑໑໔໓] ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະ ເປັນແນວໃດ?

ສະພາວະທຳທີ່ສຳປະຍຸດດ້ວຍສະພາວະທຳທີ່ເປັນຄັນຖະເຫຼົ່ານັ້ນ ເວັ້ນຄັນຖະເຫຼົ່ານັ້ນແລ້ວ ສະພາວະທຳທີ່ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍຄັນຖະແຕ່ບໍ່ເປັນຄັນຖະ

## ໖. ຄັນຖະວິບປະຍຸດຕະຄັນຖະນິຍະທຸກະ

[໑໑໔໔] ສະພາວະທຳທີ່ວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກຄັນຖະເຫຼົ່ານັ້ນ ຄື ສະພາວະທຳທີ່ເປັນກຸສົນອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຣູບປາວະຈອນ ແລະອະຣູບປາວະຈອນ ໄດ້ແກ່ ຣູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າວິບປະຍຸດຈາກຄັນຖະແຕ່ເປັນອາລົມຂອງຄັນຖະ

[໑໑໔໕] ສະພາວະທຳທີ່ວິບປະຍຸດຈາກຄັນຖະ ແລະບໍ່ເປັນອາລົມຂອງຄັນຖະເປັນເທດໃດ

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກຄັນຖະ ແລະບໍ່ເປັນອາລົມຂອງຄັນຖະ

**ຄັນຖະໂຄດສະກະ ຈົບ**

## ໖. ໂອຄະໂຄດສະກະ

## ໑. ໂອຄະທຸກະ

[໑໑໔໖] ສະພາວະທຳທີ່ເປັນໂອຄະ ເປັນແນວໃດ? ຯລຯ

**ໂອຄະໂຄດສະກະ ຈົບ**

## ຖ. ໂຍຄະໂຄດສະກະ

### ໑. ໂຍຄະທຸກະ

[໑໑໕ຖ] ສະພາວະທຳທີ່ເປັນໂຍຄະ ເປັນແນວໃດ? ຯລຯ

**ໂຍຄະໂຄດສະກະ ຈົບ**

## ໗. ນີວະຣະນະໂຄດສະກະ

### ໑. ນີວະຣະນະທຸກະ

[໑໑໕໗] ສະພາວະທຳທີ່ເປັນນີວອນ ເປັນແນວໃດ?
ນີວອນ ໖ ຄື

໑. ກາມສັນທະນີວອນ
໒. ຖີນະມິດທະນີວອນ
໓. ວິຈິກິດສານີວອນ
໔. ພະຍາປາທະນີວອນ
໕. ອຸດທັດຈະກຸກກຸດຈະນີວອນ
໖. ອະວິດຊານີວອນ

[໑໑໕໙] ບັນດານີວອນ ໖ ເຫຼົ່ານັ້ນ ກາມສັນທະນີວອນ ເປັນແນວໃດ?
ຄວາມພໍໃຈໃນກາມ ຄວາມກຳໜັດໃນກາມ ຄວາມເພີດເພີນໃນກາມ ຕັນຫາໃນ ກາມ ສິເນຫາໃນກາມ ຄວາມຮ້ອນຮົນຍ້ອນກາມ ຄວາມຫຼົງໃຫຼໃນກາມ ຄວາມມົກມຸ້ນໃນກາມ ໃນກາມທັງຫຼາຍ ນີ້ຮຽກວ່າ ກາມສັນທະນີວອນ

[໑໑໖໐] ພະຍາປາທະນີວອນ ເປັນແນວໃດ?
ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ກຳລັງທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ຈັກທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມເສື່ອມເສຍ ຯລຯ ກຳລັງທຳຄວາມເສື່ອມເສຍ ຯລຯ ຈັກທຳຄວາມເສື່ອມເສຍແກ່ຄົນທີ່ຮັກທີ່ຮັກແພງຂອງເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມຈະເລີນ ຯລຯ ກຳລັງທຳຄວາມຈະເລີນ ຯລຯ ຈັກທຳຄວາມຈະເລີນແກ່ຄົນທີ່ບໍ່ເປັນທີ່ຮັກທີ່ບໍ່ຮັກແພງຂອງເຮົາ ຫຼື ຄວາມອາຄາດເກີດຂຶ້ນໃນຖານະອັນບໍ່ສົມຄວນ ຈິດອາຄາດ ຄວາມຂັດເຄືອງ ຄວາມກະທົບກະທັ່ງ ຄວາມແຄ້ນ ຄວາມເຄືອງ ຄວາມຂຸ່ນເຄືອງ ຄວາມທີ່ຈິດດິ້ນຮົນ ໂທສະ ຄວາມຄິດປະທຸດສະຮ້າຍ ຄວາມຄິດມຸ້ງຮ້າຍ ຄວາມຂຸ່ນຈິດ ທຳມະຊາດທີ່ປະທຸດສະຮ້າຍໃຈ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ມີລັກສະນະເຊັ່ນວ່ານີ້ (ແລະ) ຄວາມຄິດປະທຸດສະຮ້າຍ ກິຣິຍາ

ທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມພິໂຣດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າພະຍາປາທະນິວອນ

[໑໑໗໑] ຖີນະມິດທະນິວອນ ເປັນແນວໃດ?

ຖີນະມິດທະນິວອນນັ້ນແຍກເປັນຖີນະຢ່າງໜຶ່ງ ເປັນມິດທະຢ່າງໜຶ່ງ

[໑໑໗໔] ບັນດາ ໔ ຢ່າງນັ້ນ ຖີນະ ເປັນແນວໃດ?

ຄວາມທີດທູ່ ຄວາມບໍ່ຄວນແກ່ວຽກງານ ຄວາມທໍ້ແທ້ ຄວາມທໍ້ຖອຍແຫ່ງໃຈ ຄວາມຫຍ່ອນຍານ ກິຣິຍາທີ່ຫຍ່ອນຍານ ພາວະທີ່ຫຍ່ອນຍານ ຄວາມຖົດຖອຍ ກິຣິຍາທີ່ທໍ້ຖອຍ ພາວະທີ່ທໍ້ຖອຍແຫ່ງໃຈ ນີ້ຮຽກວ່າ ຖີນະ

[໑໑໗໓] ມິດທະ ເປັນແນວໃດ?

ຄວາມບໍ່ສະດວກກາຍ ຄວາມບໍ່ຄວນແກ່ວຽກງານ ຄວາມຫງອຍເຫງົາ ຄວາມຊຶບເຊົາແຫ່ງກາຍ ຄວາມຫາວນອນ ຄວາມງ່ວງຊຶມ ຄວາມຫຼັບ ຄວາມໂງກງ່ວງ ຄວາມຢາກຫຼັບ ກິຣິຍາທີ່ຢາກຫຼັບ ພາວະທີ່ຢາກຫຼັບ ນີ້ຮຽກວ່າ ມິດທະ ຖີນະ ແລະມິດທະດັ່ງວ່ານີ້ລວມຮຽກວ່າ ຖີນະມິດທະນິວອນ

[໑໑໗໔] ອຸດທັດຈະກຸກກຸດຈະນິວອນ ເປັນແນວໃດ?

ອຸດທັດຈະກຸກກຸດຈະນັ້ນ ແຍກເປັນອຸດທັດຈະຢ່າງໜຶ່ງ ເປັນກຸກກຸດຈະຢ່າງໜຶ່ງ

[໑໑໗໕] ບັນດາ ໔ ຢ່າງນັ້ນ ອຸດທັດຈະ ເປັນແນວໃດ?

ຄວາມຟຸ້ງຊ່ານແຫ່ງຈິດ ຄວາມບໍ່ສະງົບແຫ່ງຈິດ ຄວາມຊັດສ່າຍແຫ່ງຈິດ ພາວະທີ່ຈິດດີ້ນຮົນ ນີ້ຮຽກວ່າອຸດທັດຈະ

[໑໑໗໖] ກຸກກຸດຈະ ເປັນແນວໃດ?

ຄວາມສຳຄັນວ່າຄວນໃນສິ່ງທີ່ບໍ່ຄວນ ບໍ່ຄວນໃນສິ່ງທີ່ຄວນ ມີໂທດໃນສິ່ງທີ່ບໍ່ມີໂທດ ບໍ່ມີໂທດໃນສິ່ງທີ່ມີໂທດ ຄວາມລຳຄານ ກິຣິຍາທີ່ລຳຄານ ພາວະທີ່ລຳຄານ ຄວາມເດືອດຮ້ອນໃຈ ຄວາມຫຍຸ້ງໃຈ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າກຸກກຸດຈະ[໑] ອຸດທັດຈະແລະກຸກກຸດຈະດັ່ງວ່ານີ້ລວມຮຽກວ່າ ອຸດທັດຈະກຸກກຸດຈະນິວອນ

[໑໑໗໗] ວິຈິກິດສານິວອນ ເປັນແນວໃດ?

ປຸຖຸຊົນຍ່ອມເຄືອບແຄງສົງໄສໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ໃນສິກຂາ ໃນສ່ວນອະດີດ ໃນສ່ວນອະນາຄົດ ໃນສ່ວນອະດີດແລະສ່ວນອະນາຄົດ ໃນປະຕິດຈະສະມຸບ

ບາດວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຄວາມເຄືອບແຄງ ກິຣິຍາທີ່ເຄືອບແຄງ ພາວະທີ່ເຄືອບແຄງ ຄວາມຄິດເຫັນໄປຕ່າງ ໆ ຄວາມຕັດສິນອາລົມບໍ່ໄດ້ ຄວາມເຫັນເປັນສອງທາງ ຄວາມເຫັນເໝືອນທາງສອງແຍກ ຄວາມສົງໄສ ຄວາມບໍ່ສາມາດຈະຍຶດຖືໂດຍສ່ວນດຽວໄດ້ ຄວາມຄິດສ່າຍໄປ ຄວາມຄິດມົວໄປ ຄວາມບໍ່ສາມາດຈະຢັ່ງລົງຍຶດຖືເປັນຍຸດຕິໄດ້ ຄວາມກະດ້າງແຫ່ງຈິດ ຄວາມລັງເລໃຈ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າວິຈິກິດສານິວອນ

[໑໑໖໗] ອະວິດຊານິວອນ ເປັນແນວໃດ?

ຄວາມບໍ່ຮູ້ໃນທຸກ ຄວາມບໍ່ຮູ້ໃນທຸກຂະສະມຸໄທ ຄວາມບໍ່ຮູ້ໃນທຸກຂະນິໂຣທະ ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ຄວາມບໍ່ຮູ້ໃນສ່ວນອະດີດ ຄວາມບໍ່ຮູ້ໃນສ່ວນອະນາຄົດ ຄວາມບໍ່ຮູ້ໃນສ່ວນອະດີດແລະສ່ວນອະນາຄົດ ຄວາມບໍ່ຮູ້ໃນປະຕິດຈະສະມຸບ ບາດວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຄວາມບໍ່ຮູ້ ຄວາມບໍ່ເຫັນ ຄວາມບໍ່ຕັດສະຣູ້ ຄວາມບໍ່ຮູ້ໂດຍສົມຄວນ ຄວາມບໍ່ຮູ້ຕາມຄວາມເປັນຈິງ ຄວາມບໍ່ແທງຕະຫຼອດ ຄວາມບໍ່ຍຶດຖືໂດຍຖືກຕ້ອງ ຄວາມບໍ່ສາມາດຢັ່ງລົງຖືເປັນຂໍ້ຍຸດຕິໄດ້ ຄວາມບໍ່ພິນິດ ຄວາມບໍ່ພິຈາລະນາ ຄວາມບໍ່ເຮັດໃຫ້ປະຈັກ ຄວາມຊາມປັນຍາ ຄວາມໂງ່ຈ້າ ຄວາມບໍ່ຮູ້ແຈ້ງ ຄວາມຫຼົງ ຄວາມລຸ່ມຫຼົງ ຄວາມຫຼົງໃຫຼ ອະວິດຊາ ໂອຄະຄືອະວິດຊາ ໂຍຄະຄືອະວິດຊາ ອະນຸໄສຄືອະວິດຊາປະຣິຍຸດຖານຄືອະວິດຊາ ຫຼິ່ມຄືອະວິດຊາ ອະກຸສົນມູນຄືໂມຫະ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າອະວິດຊານິວອນ

ສະພາວະທຳເຫຼົ່ານີ້ຊື່ວ່າເປັນນິວອນ

[໑໑໖໘] ສະພາວະທຳທີ່ບໍ່ເປັນນິວອນ ເປັນແນວໃດ?

ເວັ້ນນິວອນເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນ ວັດຕະທຸກ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ຮູບທັງໝົດ ແລະທາດທີ່ ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ ຊື່ວ່າບໍ່ເປັນນິວອນ

## ໔. ນິວະຣະນີຍະທຸກະ

[໑໑໗໐] ສະພາວະທຳທີ່ເປັນອາລົມຂອງນິວອນ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອາລົມຂອງນິວອນ

[໑໑໗໑] ສະພາວະທຳທີ່ບໍ່ເປັນອາລົມຂອງນິວອນ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນອາລົມຂອງນິວອນ

## ៣. ນີວະຣະນະສຳປະຍຸດຕະທຸກະ

[໑໑໗໔] ສະພາວະທຳທີ່ສຳປະຍຸດດ້ວຍນິວອນ ເປັນແນວໃດ?

ສະພາວະທຳທີ່ສຳປະຍຸດດ້ວຍນິວອນ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າສຳປະຍຸດດ້ວຍນິວອນ

[໑໑໗៣] ສະພາວະທຳທີ່ວິບປະຍຸດຈາກນິວອນ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກນິວອນ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າວິບປະຍຸດຈາກນິວອນ

## ໔. ນີວະຣະນະນີວະຣະນີຍະທຸກະ

[໑໑໗໔] ສະພາວະທຳທີ່ເປັນນິວອນແລະເປັນອາລົມຂອງນິວອນ ເປັນແນວໃດ?

ນິວອນເຫຼົ່ານັ້ນ ໆ ຊື່ວ່າເປັນນິວອນແລະເປັນອາລົມຂອງນິວອນ

[໑໑໗໕] ສະພາວະທຳທີ່ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນ ເປັນແນວໃດ?

ເວັ້ນນິວອນເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນ ຄື ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະທີ່ເຫຼືອ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ໗ລ໗ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນອາລົມຂອງນິວອນແຕ່ບໍ່ເປັນນິວອນ

## ៥. ນີວະຣະນະນີວະຣະນະສຳປະຍຸດຕະທຸກະ

[໑໑໗៦] ສະພາວະທຳທີ່ເປັນນິວອນແລະສຳປະຍຸດດ້ວຍນິວອນ ເປັນແນວໃດ?

ກາມສັນທະນິວອນເປັນນິວອນ ແລະສຳປະຍຸດດ້ວຍນິວອນຍ້ອນອະວິດຊານິວອນ ອະວິດຊານິວອນເປັນນິວອນ ແລະສຳປະຍຸດດ້ວຍນິວອນຍ້ອນກາມສັນທະນິວອນ ພະຍາປາທະນິວອນເປັນນິວອນ ແລະສຳປະຍຸດດ້ວຍນິວອນຍ້ອນອະວິດຊານິວອນ ອະວິດຊານິວອນເປັນນິວອນ ແລະ ສຳປະຍຸດດ້ວຍນິວອນຍ້ອນພະຍາປາທະນິວອນ ຖີນະມິດທະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນອະວິດຊານິວອນ ອະວິດຊານິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນຖີນະມິດທະນິວອນ ອຸດທັດຈະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນອະວິດຊານິວອນ ອະວິດຊານິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນອຸດທັດຈະນິວອນ ກຸກກຸດຈະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນອະວິດຊານິວອນ ອະວິດຊານິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນກຸກກຸດຈະນິວອນ ວິຈິກິດສານິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນອະວິດຊານິວອນ ອະວິດຊານິວອນເປັນນິວອນແລະສຳປະຍຸດດ້ວຍນິ

ວອນ ຍ້ອນວິຈິກິດສານິວອນ ກາມສັນທະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນອຸດທັດຈະນິວອນ ອຸດທັດຈະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນກາມສັນທະນິວອນ ພະຍາປາທະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນອຸດທັດຈະນິວອນ ອຸດທັດຈະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນພະຍາປາທະນິວອນ ຖີນະມິດທະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນອຸດທັດຈະນິວອນ ອຸດທັດຈະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນຖີນະມິດທະນິວອນ ກຸກກຸດຈະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນອຸດທັດຈະນິວອນ ອຸດທັດຈະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນກຸກກຸດຈະນິວອນ ວິຈິກິດສານິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນອຸດທັດຈະນິວອນ ອຸດທັດຈະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນວິຈິກິດສານິວອນ ອະວິດຊານິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນອຸດທັດຈະນິວອນ ອຸດທັດຈະນິວອນເປັນນິວອນແລະສຳປະຍຸດດ້ວຍນິວອນຍ້ອນອະວິດຊານິວອນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນນິວອນແລະສຳປະຍຸດດ້ວຍນິວອນ

[໑໑໗໗] ສະພາວະທຳທີ່ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນ ເປັນແນວໃດ?

ສະພາວະທຳທີ່ສຳປະຍຸດດ້ວຍນິວອນເຫຼົ່ານັ້ນ ເວັ້ນສະພາວະທຳເຫຼົ່ານັ້ນແລ້ວ ໄດ້ແກ່ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍນິວອນແຕ່ບໍ່ເປັນນິວອນ

## ໖. ນິວະຣະນະວິບປະຍຸດຕະນິວະຣະນິຍະທຸກະ

[໑໑໗໘] ສະພາວະທຳທີ່ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກນິວອນເຫຼົ່ານັ້ນ ຄື ສະພາວະທຳທີ່ເປັນກຸສົນແລະ ອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຣູບປາວະຈອນ ແລະອະຣູບປາວະຈອນ ໄດ້ແກ່ ຣູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກນິວອນແຕ່ເປັນອາລົມຂອງນິວອນ

[໑໑໗໙] ສະພາວະທຳທີ່ວິບປະຍຸດຈາກນິວອນ ແລະບໍ່ເປັນອາລົມຂອງນິວອນ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກນິວອນ ແລະບໍ່ເປັນອາລົມຂອງນິວອນ

**ນິວະຣະນະໂຄດສະກະ ຈົບ**

## ໗. ປະຣາມາສະໂຄດສະກະ

### ໑. ປະຣາມາສະທຸກະ

[໑໑໗໐] ສະພາວະທຳທີ່ເປັນປະຣາມາສະ ເປັນແນວໃດ?

ຄື ທິດຖິປະຣາມາສະ

[໑໑໗໑] ທິດຖິປະຣາມາດ ເປັນແນວໃດ?

ຄວາມເຫັນວ່າ ໂລກທ່ຽງ ໂລກບໍ່ທ່ຽງ ໂລກມີບ່ອນສຸດ ໂລກບໍ່ມີບ່ອນສຸດ ຊີວະກັບສະຣີຣະ ເປັນຢ່າງດຽວກັນ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ດັ່ງນີ້ ທິດຖິ ຄວາມເຫັນຜິດ ປ່າຣົກຄືທິດຖິ ກັນດານຄືທິດຖິ ຄວາມເຫັນເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຍຶດຖື ຄວາມຍຶດໝັ້ນ ຄວາມຕັ້ງໝັ້ນ ຄວາມຖືຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າທິດຖິປະຣາມາດ ມິດສາທິດຖິແມ່ນທັງໝົດຊື່ວ່າ ທິດຖິປະຣາມາດ

ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນປະຣາມາດ

[໑໑໗໒] ສະພາວະທຳທີ່ບໍ່ເປັນປະຣາມາດ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນປະຣາມາດເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອ ເຊິ່ງເປັນກາມາວະຈອນ ຣູບປາວະຈອນ ອະຣູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ຣູບທັງໝົດແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນປະຣາມາດ

### ໒. ປະຣາມັດຖະທຸກະ

[໑໑໗໓] ສະພາວະທຳທີ່ເປັນອາລົມຂອງປະຣາມາດ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຣູບປາວະຈອນ ແລະອະຣູບປາວະຈອນ ໄດ້ແກ່ ຣູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນອາລົມຂອງປະຣາມາດ

[໑໑໗໔] ສະພາວະທຳທີ່ບໍ່ເປັນອາລົມຂອງປະຣາມາດ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນອາລົມຂອງປະຣາມາດ

## ໓. ປະຣາມາສະສຳປະຍຸດຕະທຸກະ

[໑໑໗໕] ສະພາວະທຳທີ່ສຳປະຍຸດດ້ວຍປະຣາມາດ ເປັນແນວໃດ?

ສະພາວະທຳທີ່ສຳປະຍຸດດ້ວຍສະພາວະທຳທີ່ເປັນປະຣາມາດເຫຼົ່ານັ້ນ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍປະຣາມາດ

[໑໑໗໖] ສະພາວະທຳທີ່ວິບປະຍຸດຈາກປະຣາມາດ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກສະພາວະທຳທີ່ເປັນປະຣາມາດເຫຼົ່ານັ້ນ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກປະຣາມາດ

## ໔. ປະຣາມາດປາມັດຖະທຸກະ

[໑໑໗໗] ສະພາວະທຳທີ່ເປັນປະຣາມາດແລະເປັນອາລົມຂອງປະຣາມາດ ເປັນແນວໃດ?

ປະຣາມາດນັ້ນ ໆ ຊື່ວ່າເປັນປະຣາມາດ ແລະເປັນອາລົມຂອງປະຣາມາດ

[໑໑໗໘] ສະພາວະທຳທີ່ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນປະຣາມາດເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະທີ່ເຫຼືອ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ໗ລ໗ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອາລົມຂອງປະຣາມາດແຕ່ບໍ່ເປັນປະຣາມາດ

## ໕. ປະຣາມາສະວິບປະຍຸດຕະປາມັດຖະທຸກະ

[໑໑໗໙] ສະພາວະທຳທີ່ວິບປະຍຸດຈາກປະຣາມາດ ແຕ່ເປັນອາລົມຂອງປະຣາມາດ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກປະຣາມາດເຫຼົ່ານັ້ນ ຄື ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ໗ລ໗ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກປະຣາມາດ ແຕ່ເປັນອາລົມຂອງປະຣາມາດ

[໑໑໘໐] ສະພາວະທຳທີ່ວິບປະຍຸດຈາກປະຣາມາດ ແລະບໍ່ເປັນອາລົມຂອງປະຣາມາດ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກປະຣາມາດ ແລະບໍ່ເປັນອາລົມຂອງປະຣາມາດ

**ປະຣາມາສະໂຄດສະກະ ຈົບ**

## ໑໐. ມະຫັນຕະຣະທຸກະ

### ໑. ສາຣຳມະນະທຸກະ

[໑໑໙໑] ສະພາວະທຳທີ່ຮັບຮູ້ອາລົມໄດ້ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ສະພາວະທຳເຫຼົ່ານີ້ ຊື່ວ່າຮັບຮູ້ອາລົມໄດ້

[໑໑໙໒] ສະພາວະທຳທີ່ຮັບຮູ້ອາລົມບໍ່ໄດ້ ເປັນແນວໃດ?

ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ຮັບຮູ້ອາລົມບໍ່ໄດ້

### ໒. ຈິດຕະທຸກະ

[໑໑໙໓] ສະພາວະທຳທີ່ເປັນຈິດ ເປັນແນວໃດ?

ຈັກຂຸວິນຍານ ໂສຕະວິນຍານ ຄານະວິນຍານ ຊິວຫາວິນຍານ ກາຍະວິນຍານ ມະໂນທາດ ແລະມະໂນວິນຍານທາດ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນຈິດ

[໑໑໙໔] ສະພາວະທຳທີ່ບໍ່ເປັນຈິດ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ສັງຂານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ເປັນຈິດ

### ໓. ເຈຕະສິກະທຸກະ

[໑໑໙໕] ສະພາວະທຳທີ່ເປັນເຈຕະສິກ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນເຈຕະສິກ

[໑໑໙໖] ສະພາວະທຳທີ່ບໍ່ເປັນເຈຕະສິກ ເປັນແນວໃດ?

ຈິດ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນ ເຈຕະສິກ

### ໔. ຈິດຕະສຳປະຍຸດຕະທຸກະ

[໑໑໙໗] ສະພາວະທຳທີ່ສຳປະຍຸດດ້ວຍຈິດ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດ ດ້ວຍຈິດ

[໑໑໙໘] ສະພາວະທຳທີ່ວິປປະຍຸດຈາກຈິດ ເປັນແນວໃດ?

ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ວິປປະຍຸດຈາກຈິດ ຈິດບໍ່ເພິ່ງກ່າວວ່າສຳປະຍຸດດ້ວຍຈິດ ຫຼື ວິປປະຍຸດຈາກຈິດ

## ໕. ຈິດຕະສັງສັດຖະທຸກະ

[໑໑໙໙] ສະພາວະທຳທີ່ປະປົນກັບຈິດ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າປະປົນກັບຈິດ

[໑໔໐໐] ສະພາວະທຳທີ່ບໍ່ປະປົນກັບຈິດ ເປັນແນວໃດ?

ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ປະປົນກັບຈິດ ຈິດບໍ່ເພິ່ງກ່າວວ່າ ປະປົນກັບຈິດ ຫຼື ບໍ່ປະປົນກັບຈິດ

## ໖. ຈິດຕະສະມຸດຖານະທຸກະ

[໑໔໐໑] ສະພາວະທຳທີ່ມີຈິດເປັນສະມຸດຖານ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ສັງຂານຂັນ ກາຍວິນຍັດ ແລະວະຈີວິນຍັດ ຫຼືຮູບແມ່ນອື່ນໃດທີ່ເກີດແຕ່ຈິດ ມີຈິດເປັນເຫດ ມີຈິດເປັນສະມຸດຖານ ໄດ້ແກ່ ຮູປາຍະຕະນະ ສັດທາຍະຕະນະ ຄັນທາຍະຕະນະ ຣະສາຍະຕະນະ ໂຜດຖັບພາຍະຕະນະ ອາກາສະທາດ ອາໂປທາດ ລະຫຸຕາຮູບ ມຸທຸຕາຮູບ ກຳມັນຍະຕາຮູບ ອຸປະຈະຍະຮູບ ສັນຕະຕິຮູບ ແລະກະວະລິງກາຣາຫານ ສະພາວະທຳເຫຼົ່ານີ້ຊື່ວ່າ ມີຈິດເປັນສະມຸດຖານ

[໑໔໐໒] ສະພາວະທຳທີ່ບໍ່ມີຈິດເປັນສະມຸດຖານ ເປັນແນວໃດ?

ຈິດ ຮູບທີ່ເຫຼືອ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ມີຈິດ ເປັນສະມຸດຖານ

## ໗. ຈິດຕະສະຫະພູທຸກະ

[໑໔໐໓] ສະພາວະທຳທີ່ເກີດພ້ອມກັບຈິດ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ສັງຂານຂັນ ກາຍວິນຍັດ ແລະວະຈີວິນຍັດ ສະພາວະທຳເຫຼົ່ານີ້ຊື່ວ່າເກີດພ້ອມກັບຈິດ

[໑໔໐໔] ສະພາວະທຳທີ່ບໍ່ເກີດພ້ອມກັບຈິດ ເປັນແນວໃດ?

ຈິດ ຮູບທີ່ເຫຼືອ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເກີດພ້ອມກັບຈິດ

## ໘. ຈິດຕານຸປະຣິວັດຕິທຸກະ

[໑໔໐໕] ສະພາວະທຳທີ່ເປັນໄປຕາມຈິດ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ສັງຂານຂັນ ກາຍວິນຍັດ ແລະວະຈີວິນຍັດ ສະພາວະທຳເຫຼົ່ານີ້ຊື່ວ່າເປັນໄປຕາມຈິດ

[໑໔໐໖] ສະພາວະທຳທີ່ບໍ່ເປັນໄປຕາມຈິດ ເປັນແນວໃດ?

ຈິດ ຮູບທີ່ເຫຼືອ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ເປັນໄປ ຕາມຈິດ

## ໙. ຈິດຕະສັງສັດຖະສະມຸດຖານະທຸກະ

[໑໔໐໗] ສະພາວະທຳທີ່ປະປົນກັບຈິດແລະມີຈິດເປັນສະມຸດຖານ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ປະປົນກັບຈິດແລະມີຈິດເປັນສະມຸດຖານ

[໑໔໐໘] ສະພາວະທຳທີ່ບໍ່ປະປົນກັບຈິດ ແລະມີຈິດເປັນສະມຸດຖານ ເປັນແນວໃດ?

ຈິດ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ປະປົນກັບຈິດແລະມີຈິດເປັນສະມຸດຖານ

## ໑໐. ຈິດຕະສັງສັດຖະສະມຸດຖານະສະຫະພູທຸກະ

[໑໔໐໙] ສະພາວະທຳທີ່ປະປົນກັບຈິດມີຈິດເປັນສະມຸດຖານ ແລະເກີດພ້ອມກັບຈິດ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ປະປົນກັບຈິດ ມີຈິດເປັນສະມຸດຖານແລະເກີດພ້ອມກັບຈິດ

[໑໔໑໐] ສະພາວະທຳທີ່ບໍ່ປະປົນກັບຈິດມີຈິດເປັນສະມຸດຖານ ແລະເກີດພ້ອມກັບຈິດ ເປັນແນວໃດ?

ຈິດ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ປະປົນກັບຈິດມີຈິດເປັນສະມຸດຖານ ແລະເກີດພ້ອມກັບຈິດ

## ໑໑. ຈິດຕະສັງສັດຖະສະມຸດຖານານຸປະຣິວັດຕິທຸກະ

[໑໔໑໑] ສະພາວະທຳທີ່ປະປົນກັບຈິດມີຈິດເປັນສະມຸດຖານ ແລະເປັນໄປຕາມຈິດ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ແລະສັງຂານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ປະປົນກັບຈິດ ມີຈິດເປັນສະມຸດຖານ ແລະເປັນໄປຕາມຈິດ

[໑໔໑໒] ສະພາວະທຳທີ່ບໍ່ປະປົນກັບຈິດມີຈິດເປັນສະມຸດຖານ ແລະເປັນໄປຕາມຈິດ ເປັນແນວໃດ?

ຈິດ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ປະປົນກັບຈິດມີຈິດເປັນສະມຸດຖານ ແລະເປັນໄປຕາມຈິດ

## ໑໘. ອັດຊັດຕິກະທຸກະ

[໑໘໑໓] ສະພາວະທຳທີ່ເປັນພາຍໃນ ເປັນແນວໃດ?

ຈັກຂາຍະຕະນະ ຯລຯ ມະນາຍະຕະນະ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນພາຍໃນ

[໑໘໑໔] ສະພາວະທຳທີ່ເປັນພາຍນອກ ເປັນແນວໃດ?

ຣູປາຍະຕະນະ ຯລຯ ທຳມາຍະຕະນະ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນພາຍນອກ

## ໑໓. ອຸປາທາທຸກະ

[໑໘໑໕] ສະພາວະທຳທີ່ເປັນອຸປາທາຍະຣູບ ເປັນແນວໃດ?

ຈັກຂາຍະຕະນະ ຯລຯ ກະວະລິງກາຣາຫານ ສະພາວະທຳເຫຼົ່ານີ້ຊື່ວ່າເປັນອຸປາທາຍະຣູບ

[໑໘໑໖] ສະພາວະທຳທີ່ບໍ່ເປັນອຸປາທາຍະຣູບ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ສັງຂານຂັນ ວິນຍານຂັນ ມະຫາພູຕະຣູບ ໔ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ເປັນອຸປາທາຍະຣູບ

## ໑໔. ອຸປາທິນນະທຸກະ

[໑໘໑໗] ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິຍຶດຖື ເປັນແນວໃດ?

ວິບາກແຫ່ງສະພາວະທຳທີ່ເປັນກຸສົນ ແລະອະກຸສົນ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຣູບປາວະຈອນ ແລະອະຣູບປາວະຈອນ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ແລະຣູບ ອັນກຳປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ກຳອັນປະກອບດ້ວຍຕັນຫາແລະທິດຖິຍຶດຖື

[໑໘໑໘] ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖື ເປັນເຫດໃດ?

ສະພາວະທຳທີ່ເປັນກຸສົນແລະອະກຸສົນ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຣູບປາວະຈອນ ແລະອະຣູບປາວະຈອນ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳທີ່ເປັນກິຣິຍາ ບໍ່ເປັນກຸສົນ ບໍ່ເປັນອະກຸສົນ ແລະບໍ່ເປັນວິບາກແຫ່ງກຳ ຣູບອັນກຳບໍ່ປຸງແຕ່ງ ມັກຜົນຂອງມັກທີ່ເປັນໂລກຸດຕະຣະ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ ຊື່ວ່າກຳອັນປະກອບດ້ວຍຕັນຫາແລະທິດຖິບໍ່ຍຶດຖື

**ມະຫັນຕະຣະທຸກະ ຈົບ**

# ໑໑. ອຸປາທານະໂຄດສະກະ

## ໑. ອຸປາທານະທຸກະ

[໑໔໑໙] ສະພາວະທຳທີ່ເປັນອຸປາທານ ເປັນແນວໃດ?
ອຸປາທານ ໔ ຄື

໑. ກາມຸປາທານ
໒. ທິດຖຸປາທານ
໓. ສີລັບພະຕຸປາທານ
໔. ອັດຕະວາທຸປາທານ

[໑໔໒໐] ບັນດາອຸປາທານ ໔ ນັ້ນ ກາມຸປາທານ ເປັນແນວໃດ?

ຄວາມຍຶດໝັ້ນໃນກາມ ຄວາມກຳໜັດໃນກາມ ຄວາມເພີດເພີນໃນກາມ ຕັນຫາ ໃນກາມ ສິເນຫາໃນກາມ ຄວາມຮ້ອນຮົນຍ້ອນກາມ ຄວາມຫຼົງໃຫຼໃນກາມ ຄວາມມົກມຸ້ນໃນກາມ ໃນກາມທັງຫຼາຍ ນີ້ຮຽກວ່າ ກາມຸປາທານ

[໑໔໒໑] ທິດຖຸປາທານ ເປັນແນວໃດ?

ຄວາມເຫັນວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາບໍ່ມີຜົນ ການບວງສວງບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີເຮັດຊົ່ວກໍບໍ່ມີ ບໍ່ມີໂລກນີ້ ບໍ່ມີໂລກໜ້າ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ສັດທີ່ເກີດຜຸດຂຶ້ນບໍ່ມີ ສະມະນະພາມຜູ້ປະພຶດປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ ດັ່ງນີ້ ທິດຖິ ຄວາມເຫັນຜິດ ປ່າຮົກຄືທິດຖິ ກັນດານຄືທິດຖິ ຄວາມເຫັນເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຍຶດຖືຜິດ ຄວາມຍຶດໝັ້ນ ຄວາມຕັ້ງໝັ້ນ ຄວາມຖືຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິອັນເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຍຶດຖືໂດຍວິປະລາດມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າທິດຖຸປາທານ ເວັ້ນສີລັບພະຕຸປາທານ ແລະອັດຕະວາທຸປາທານແລ້ວ ມິດສາທິດຖິແມ່ນທັງໝົດຊື່ວ່າ ທິດຖຸປາທານ

[໑໔໒໒] ສີລັບພະຕຸປາທານ ເປັນແນວໃດ?

ສະມະນະພາມພາຍນອກ ແຕ່ສາດສະໜານີ້ມີຄວາມເຫັນວ່າ ຄວາມບໍລິສຸດຍ່ອມມີໄດ້ດ້ວຍສິນ ດ້ວຍພົດ ດ້ວຍສິນແລະພົດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ປ່າຮົກຄືທິດຖິ ກັນດານຄື ທິດຖິ ຄວາມເຫັນເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຍຶດຖືຜິດ ຄວາມຍຶດໝັ້ນ ຄວາມຕັ້ງໝັ້ນ ຄວາມຖືຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິອັນເປັນ

ບໍ່ເກີດແຫ່ງຄວາມພິນາດ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າສີລັບພະຕຸປາທານ

[໑໔໔໓] ອັດຕະວາທຸປາທານ ເປັນແນວໃດ?

ປຸຖຸຊົນໃນໂລກນີ້ ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການຝຶກຝົນໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການຝຶກຝົນໃນທຳຂອງສັດຕະບຸຣຸດ ຍ່ອມພິຈາລະນາເຫັນຮູບເປັນຕົນ ຫຼືເຫັນຕົນມີຮູບ ເຫັນຮູບໃນຕົນ ຫຼື ເຫັນຕົນໃນຮູບ ເຫັນເວທະນາເປັນຕົນຫຼືເຫັນຕົນມີເວທະນາ ເຫັນເວທະນາໃນຕົນ ຫຼື ເຫັນຕົນໃນເວທະນາ ເຫັນສັນຍາເປັນຕົນ ຫຼື ເຫັນຕົນມີສັນຍາ ເຫັນສັນຍາໃນຕົນ ຫຼື ເຫັນຕົນໃນສັນຍາ ເຫັນສັງຂານເປັນຕົນຫຼືເຫັນຕົນມີສັງຂານ ເຫັນສັງຂານໃນຕົນ ຫຼື ເຫັນຕົນໃນສັງຂານ ເຫັນວິນຍານເປັນຕົນຫຼືເຫັນຕົນມີວິນຍານ ເຫັນວິນຍານໃນຕົນ ຫຼື ເຫັນຕົນໃນວິນຍານ ທິດຖິ ຄວາມເຫັນຜິດ ປ່າຮົກຄືທິດຖິ ກັນດານຄືທິດຖິ ຄວາມເຫັນເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດ ຄື ທິດຖິ ຄວາມຍຶດຖືຜິດ ຄວາມຍຶດໝັ້ນ ຄວາມຕັ້ງໝັ້ນ ຄວາມຖືຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າອັດຕະວາທຸປາທານ

## ສະພາວະທຳເຫຼົ່ານີ້ຊື່ວ່າ ອຸປາທານ

[໑໔໔໔] ສະພາວະທຳທີ່ບໍ່ເປັນອຸປາທານ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນອຸປາທານແລ້ວ ສະພາວະທຳທີ່ເປັນກຸສົນອະກຸສົນ ແລະ ອັບພະຍາກະຕະທີ່ເຫຼືອ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ເປັນອຸປາທານ

## ໔. ອຸປາທານິຍະທຸກະ

[໑໔໔໕] ສະພາວະທຳທີ່ເປັນອາລົມຂອງອຸປາທານ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ໗ລ໗ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນອາລົມຂອງອຸປາທານ

[໑໔໔໖] ສະພາວະທຳທີ່ບໍ່ເປັນອາລົມຂອງອຸປາທານ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ເປັນອາລົມຂອງອຸປາທານ

## ໓. ອຸປາທານະສຳປະຍຸດຕະທຸກະ

[໑໔໘໗] ສະພາວະທຳທີ່ສຳປະຍຸດດ້ວຍອຸປາທານ ເປັນແນວໃດ?

ສະພາວະທຳທີ່ສຳປະຍຸດດ້ວຍສະພາວະທຳທີ່ເປັນອຸປາທານ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍອຸປາທານ

[໑໔໘໘] ສະພາວະທຳທີ່ວິບປະຍຸດຈາກອຸປາທານ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກອຸປາທານເຫຼົ່ານັ້ນ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າວິບປະຍຸດຈາກອຸປາທານ

## ໔. ອຸປາທານະອຸປາທານິຍະທຸກະ

[໑໔໘໙] ສະພາວະທຳທີ່ເປັນອຸປາທານແລະເປັນອາລົມຂອງອຸປາທານ ເປັນເຫດໃດ?

ອຸປາທານນັ້ນ ໆ ຊື່ວ່າເປັນອຸປາທານ ແລະເປັນອາລົມຂອງອຸປາທານ

[໑໔໙໐] ສະພາວະທຳທີ່ເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານ ເປັນເຫດໃດ

ເວັ້ນສະພາວະທຳທີ່ເປັນອຸປາທານເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະ ອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນອາລົມຂອງອຸປາທານແຕ່ບໍ່ເປັນອຸປາທານ

## ໕. ອຸປາທານະອຸປາທານະສຳປະຍຸດຕະທຸກະ

[໑໔໙໑] ສະພາວະທຳທີ່ເປັນອຸປາທານ ແລະສຳປະຍຸດດ້ວຍອຸປາທານ ເປັນແນວໃດ?

ທິດຖຸປາທານເປັນອຸປາທານ ແລະສຳປະຍຸດດ້ວຍອຸປາທານຍ້ອນກາມຸປາທານ ກາມຸປາທານເປັນອຸປາທານ ແລະສຳປະຍຸດດ້ວຍອຸປາທານຍ້ອນທິດຖຸປາທານ ສີລັບພະຕຸປາທານເປັນອຸປາທານແລະສຳປະຍຸດດ້ວຍອຸປາທານຍ້ອນກາມຸປາທານ ກາມຸປາທານເປັນອຸປາທານແລະສຳປະຍຸດດ້ວຍອຸປາທານຍ້ອນສີລັບພະຕຸປາທານ ອັດຕະວາທຸປາທານເປັນອຸປາທານແລະສຳປະຍຸດດ້ວຍອຸປາທານຍ້ອນກາມຸປາທານ ກາມຸປາທານເປັນອຸປາທານແລະສຳປະຍຸດດ້ວຍ ອຸປາທານຍ້ອນອັດຕະວາທຸປາທານ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອຸປາທານແລະສຳປະຍຸດດ້ວຍອຸປາທານ

[໑໔໙໔] ສະພາວະທຳທີ່ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນອຸປາທານເຫຼົ່ານັ້ນແລ້ວໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍອຸປາທານແຕ່ບໍ່ເປັນອຸປາທານ

## ໖. ອຸປາທານະວິບປະຍຸດຕະອຸປາທານິຍະທຸກະ

[໑໔໓໓] ສະພາວະທຳທີ່ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກອຸປາທານເຫຼົ່ານັ້ນ ຄື ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຣູບປາວະຈອນ ແລະອະຣູບປາວະຈອນ ໄດ້ແກ່ ຣູບຂັນ ໗ລ໗ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກອຸປາທານແຕ່ເປັນອາລົມຂອງອຸປາທານ

[໑໔໓໔] ສະພາວະທຳທີ່ວິບປະຍຸດຈາກອຸປາທານ ແລະບໍ່ເປັນອາລົມຂອງອຸປາທານ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກອຸປາທານ ແລະບໍ່ເປັນອາລົມຂອງອຸປາທານ

**ອຸປາທານະໂຄດສະກະ ຈົບ**

**ທຸຕິຍະພານະວານໃນນິກເຂປະກັນ ຈົບ**

## ໑໘. ກິເລສະໂຄດສະກະ

## ໑. ກິເລສະທຸກະ

[໑໔໓໕] ສະພາວະທຳທີ່ເປັນກິເລດ ເປັນແນວໃດ?

ກິເລດວັດຖຸ ໑໐ ຄື

| | |
|---|---|
| ໑. ໂລພະ | ໒. ໂທສະ |
| ໓. ໂມຫະ | ໔. ມານະ |
| ໕. ທິດຖິ | ໖. ວິຈິກິດສາ |
| ໗. ຖີນະ | ໘. ອຸດທັດຈະ |
| ໙. ອະຫິຣິກະ | ໑໐. ອະໂນດຕັບປະ |

[໑໔໓໖] ບັນດາກິເລດວັດຖຸ ໑໐ ນັ້ນ ໂລພະ ເປັນແນວໃດ?

ຄວາມກຳໜັດ ຄວາມກຳໜັກແຮງກ້າ ຄວາມໄປຕາມອາລົມ ຄວາມຍິນດີ ຄວາມເພີດເພີນ ຄວາມກຳໜັດດ້ວຍອຳນາດຄວາມເພີດເພີນ ຄວາມກຳໜັກແຮງກ້າແຫ່ງຈິດ ຄວາມຢາກ ຄວາມ

ສະຍົບ ຄວາມມົກມຸ້ນ ຄວາມຕ້ອງການ ຄວາມຮັກແພງ ຄວາມຂ້ອງຢູ່ ຄວາມຈົມຢູ່ ທຳມະຊາດທີ່ດຶງໄປ ທຳມະຊາດທີ່ຫຼອກລວງ ທຳມະຊາດທີ່ຍັງສັດໃຫ້ເກີດ ທຳມະຊາດທີ່ຍັງສັດໃຫ້ເກີດພ້ອມ ທຳມະຊາດທີ່ຮ້ອຍຮັດ ທຳມະຊາດທີ່ມີຂ່າຍ ທຳມະຊາດທີ່ກຳຊາບໃຈ ທຳມະຊາດທີ່ຊ່ານໄປ ທຳມະຊາດເໝືອນເສັ້ນດ້າຍ ທຳມະຊາດທີ່ແຜ່ໄປ ທຳມະຊາດທີ່ປະມວນມາ ທຳມະຊາດເປັນເພື່ອນສອງປະນິທານ ທຳມະຊາດທີ່ນຳໄປສູ່ພົບ ຕັນຫາເໝືອນປ່າ ຕັນຫາເໝືອນດົງ ຄວາມກ່ຽວຂ້ອງ ຄວາມເຍື່ອໃຍ ຄວາມຫ່ວງໃຍ ຄວາມຜູກພັນ ຄວາມຫວັງກິຣິຍາທີ່ຫວັງ ພາວະທີ່ຫວັງ ຄວາມຫວັງຮູບ ຄວາມຫວັງສຽງ ຄວາມຫວັງກິ່ນ ຄວາມຫວັງຣົດ ຄວາມຫວັງໂຜດຖັບພະ ຄວາມຫວັງລາບ ຄວາມຫວັງຊັບ ຄວາມຫວັງບຸດ ຄວາມຫວັງຊີວິດ ທຳມະຊາດທີ່ຊຶ່ມ ທຳມະຊາດທີ່ຊຶ່ມທົ່ວ ທຳມະຊາດທີ່ຊຶ່ມຍິ່ງ ຄວາມຊຶ່ມ ກິຣິຍາທີ່ຊຶ່ມ ພາວະທີ່ຊຶ່ມ ຄວາມໂລບ ກິຣິຍາທີ່ໂລບ ພາວະທີ່ໂລບ ທຳມະຊາດເປັນເຫດຊົມຊານໄປ ຄວາມຕ້ອງການໃນອາລົມດີ ໆ ຄວາມກຳໜັດໃນທຳທີ່ບໍ່ຄວນ ຄວາມໂລບເກີນພໍດີ ຄວາມຕິດໃຈ ກິຣິຍາທີ່ຕິດໃຈ ຄວາມປາຖະໜາ ຄວາມຍິນດີໃຈ ຄວາມປາຖະໜາຫຼາຍ ກາມຕັນຫາ ພະວະຕັນຫາ ວິພະວະຕັນຫາ ຮູບຕັນຫາ ອະຮູບຕັນຫາ ນິໂຣທະຕັນຫາ (ຄືຣາຄະທີ່ປະກອບດ້ວຍອຸດເສທະທິດຖິ) ຮູບຕັນຫາ ສັດທະຕັນຫາ ຄັນທະຕັນຫາ ຣະສະຕັນຫາ ໂຜດຖັບພະຕັນຫາ ທຳມະຕັນຫາ ໂອຄະ ໂຍຄະ ຄັນຖະ ອຸປາທານ ອາວອນ ນິວອນ ເຄື່ອງປິດບັງ ເຄື່ອງຜູກ ອຸປະກິເລດ ອະນຸໄສ ປະຣິຍຸດຖານ ຕັນຫາເໝືອນເຄືອເຂົາ ຄວາມປາຖະໜາວັດຖຸມີປະການຕ່າງ ໆ ມູນເຫດແຫ່ງທຸກ ເຫດແຫ່ງທຸກ ແດນເກີດແຫ່ງທຸກ ບ່ວງແຫ່ງມານ ເບັດແຫ່ງມານ ວິໄສແຫ່ງມານ ຕັນຫາເໝືອນແມ່ນ້ຳ ຕັນຫາ ເໝືອນຕາໜ່າງ ຕັນຫາເໝືອນເຊືອກ ຕັນຫາເໝືອນມະຫາສະມຸດ ອະພິດຊາ ອະກຸສົນມູນຄືໂລພະນີ້ ຮຽກວ່າໂລພະ

[໑໔໙໗] ໂທສະ ເປັນແນວໃດ?

ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ກຳລັງທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ຈັກທຳຄວາມເສື່ອມເສຍແກ່ເຮົາ ຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມເສື່ອມເສຍ ຯລຯ ກຳລັງທຳຄວາມເສື່ອມເສຍ ຯລຯ ຈັກທຳຄວາມເສື່ອມເສຍແກ່ຄົນທີ່ຮັກທີ່ຮັກແພງຂອງເຮົາຄວາມອາຄາດເກີດຂຶ້ນວ່າ ຜູ້ນີ້ເຄີຍທຳຄວາມຈະເລີນ ຯລຯ ກຳລັງທຳຄວາມຈະເລີນ ຯລຯ ຈັກທຳຄວາມຈະເລີນແກ່ຄົນຜູ້ບໍ່ເປັນທີ່ຮັກທີ່ບໍ່ຮັກແພງຂອງເຮົາ ຫຼື ຄວາມອາຄາດເກີດຂຶ້ນໃນຖານະອັນບໍ່ສົມຄວນ ຈິດອາຄາດ ຄວາມຂັດເຄືອງ ຄວາມກະທົບກະທັ່ງ ຄວາມແຄ້ນ ຄວາມເຄືອງ ຄວາມຂຸ່ນເຄືອງ ຄວາມທີ່ຈິດດິ້ນຣົນ ໂທສະ ຄວາມຄິດປະທຸດສະຮ້າຍ ຄວາມຄິດມຸ້ງຮ້າຍ ຄວາມຂຸ່ນຈິດ ທຳມະຊາດທີ່ປະທຸດສະຮ້າຍໃຈ ຄວາມໂກດ ກິຣິຍາທີ່ໂກດ ພາວະທີ່ໂກດ ມີລັກສະນະເຊັ່ນວ່ານີ້ (ແລະ) ຄວາມຄິດປະທຸດສະຮ້າຍ ກິຣິຍາທີ່ຄິດປະທຸດສະຮ້າຍ ພາວະທີ່ຄິດປະທຸດສະຮ້າຍ ຄວາມຄິດ

ປອງຮ້າຍ ກິຣິຍາທີ່ຄິດປອງຮ້າຍ ພາວະທີ່ຄິດປອງຮ້າຍ ຄວາມພິໂຣດ ຄວາມແຄ້ນ ຄວາມດຸຮ້າຍ ຄວາມຮຸນແຮງ ຄວາມບໍ່ແຊ່ມຊື່ນແຫ່ງຈິດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າໂທສະ

[໑໘໓໗] ໂມຫະ ເປັນແນວໃດ?

ຄວາມບໍ່ຮູ້ໃນທຸກ ຄວາມບໍ່ຮູ້ໃນທຸກຂະສະມຸໄທ ຄວາມບໍ່ຮູ້ໃນທຸກຂະນິໂຣທະ ຄວາມບໍ່ຮູ້ໃນທຸກຂະນິໂຣທະຄາມິນີປະຕິປະທາ ຄວາມບໍ່ຮູ້ໃນສ່ວນອະດີດ ຄວາມບໍ່ຮູ້ໃນສ່ວນອະນາຄົດ ຄວາມບໍ່ຮູ້ໃນສ່ວນອະດີດແລະສ່ວນອະນາຄົດ ຄວາມບໍ່ຮູ້ໃນປະຕິດຈະສະມຸບບາດວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຄວາມບໍ່ຮູ້ ຄວາມບໍ່ເຫັນ ຄວາມບໍ່ຕັດສະຮູ້ ຄວາມບໍ່ຮູ້ໂດຍສົມຄວນ ຄວາມບໍ່ຮູ້ຕາມຄວາມເປັນຈິງ ຄວາມບໍ່ແທງຕະຫຼອດ ຄວາມບໍ່ຢຶດຖືໂດຍຖືກຕ້ອງ ຄວາມບໍ່ຢັ່ງລົງຖືເປັນຂໍ້ຍຸດຕິໄດ້ ຄວາມບໍ່ພິນິດ ຄວາມບໍ່ພິຈາລະນາ ຄວາມບໍ່ເຮັດໃຫ້ປະຈັກ ຄວາມຊາມປັນຍາ ຄວາມໂງ່ຈ້າ ຄວາມບໍ່ຮູ້ແຈ້ງ ຄວາມຫຼົງ ຄວາມຫຼູ່ມຫຼົງ ຄວາມຫຼົງໃຫຼ ອະວິດຊາ ໂອຄະຄືອະວິດຊາ ໂຍຄະຄືອະວິດຊາ ອະນຸໄສຄືອະວິດຊາ ປະຣິຍຸດຖານຄືອະວິດຊາ ຫຼີ້ມຄືອະວິດຊາ ອະກຸສົນມູນຄືໂມຫະ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າໂມຫະ

[໑໘໓໘] ມານະ ເປັນແນວໃດ?

ຄວາມຖືຕົວວ່າ ເຮົາດີກວ່າເຂົາ ເຮົາສະເໝີກັບເຂົາ ເຮົາຊົ່ວກວ່າເຂົາ ຄວາມຖືຕົວ ກິຣິຍາທີ່ຖືຕົວ ພາວະທີ່ຖືຕົວ ຄວາມຍົກຕົນ ຄວາມເຊີດຕົນ ຄວາມເຊີດຊູຕົນເໝືອນທຸງ ຄວາມຍົກຈິດຂຶ້ນ ຄວາມທີ່ຈິດຕ້ອງການເປັນເໝືອນທຸງ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າມານະ

[໑໘໔໐] ທິດຖິ ເປັນແນວໃດ?

ຄວາມເຫັນວ່າ ໂລກທ່ຽງ ໂລກບໍ່ທ່ຽງ ໂລກມີບ່ອນສຸດ ໂລກບໍ່ມີບ່ອນສຸດ ຊີວະກັບສະຣີຣະເປັນຢ່າງດຽວກັນ ຊີວະກັບສະຣີຣະເປັນຄົນລະຢ່າງກັນ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກແລະບໍ່ເກີດອີກ ຫຼັງຈາກຕາຍແລ້ວ ຕະຖາຄົດເກີດອີກກໍບໍ່ແມ່ນ ຈະວ່າບໍ່ເກີດອີກກໍບໍ່ແມ່ນ ດັ່ງນີ້ ທິດຖິຄວາມເຫັນຜິດ ປ່າຮົກຄືທິດຖິ ກັນດານຄືທິດຖິ ຄວາມເຫັນເປັນຂ້າເສິກຕໍ່ສຳມາທິດຖິ ຄວາມປັ່ນປ່ວນແຫ່ງທິດຖິ ສັງໂຍດຄືທິດຖິ ຄວາມຢຶດຖື ຄວາມຢຶດໝັ້ນ ຄວາມຕັ້ງໝັ້ນ ຄວາມຖືຜິດ ທາງຊົ່ວ ທາງຜິດ ພາວະທີ່ຜິດ ລັດທິອັນເປັນບໍ່ເກີດແຫ່ງຄວາມພິນາດ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າທິດຖິ ມິດສາທິດຖິແມ່ນທັງໝົດຊື່ວ່າ ເປັນທິດຖິ

[໑໘໔໑] ວິຈິກິດສາ ເປັນແນວໃດ?

ປຸຖຸຊົນຍ່ອມເຄືອບແຄງສົງໄສໃນພຣະສາດສະດາ ໃນພຣະທຳ ໃນພຣະສົງ ໃນສິກຂາໃນສ່ວນອະດີດ ໃນສ່ວນອະນາຄົດ ໃນສ່ວນອະດີດແລະສ່ວນອະນາຄົດ ໃນປະຕິດຈະສະມຸບບາດວ່າ ຍ້ອນທຳນີ້ເປັນປັດໄຈ ທຳນີ້ຈຶ່ງມີ ຄວາມເຄືອບແຄງ ກິຣິຍາທີ່ເຄືອບແຄງ ພາວະທີ່

ເຄືອບແຄງ ຄວາມຄິດເຫັນໄປຕ່າງ ໆ ຄວາມຕັດສິນອາລົມບໍ່ໄດ້ ຄວາມເຫັນເປັນສອງທາງ ຄວາມເຫັນເໝືອນທາງສອງແຍກ ຄວາມສົງໄສ ຄວາມບໍ່ສາມາດຫຍັ່ງຢຶດຖືໂດຍສ່ວນດຽວໄດ້ ຄວາມຄິດສ່າຍໄປ ຄວາມຄິດມົວໄປ ຄວາມບໍ່ສາມາດຢັ່ງລົງຢຶດຖືເປັນຍຸດຕິໄດ້ ຄວາມກະດ້າງແຫ່ງຈິດ ຄວາມລັງເລໃຈ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າວິຈິກິດສາ

[໑໔໔໔] ຖີນະ ເປັນແນວໃດ?

ຄວາມທໍ້ຖອຍ ຄວາມບໍ່ຄວນແກ່ວຽກງານ ຄວາມທໍ້ແທ້ ຄວາມທໍ້ຖອຍແຫ່ງໃຈ ຄວາມຫຍ່ອນຍານ ກິຣິຍາທີ່ຫຍ່ອນຍານ ພາວະທີ່ຫຍ່ອນຍານ ຄວາມຖົດຖອຍ ກິຣິຍາທີ່ທໍ້ຖອຍ ພາວະ ທີ່ທໍ້ຖອຍແຫ່ງໃຈ ນີ້ຮຽກວ່າ ຖີນະ

[໑໔໔໓] ອຸດທັດຈະ ເປັນແນວໃດ?

ຄວາມຟຸ້ງຊ່ານແຫ່ງຈິດ ຄວາມບໍ່ສະງົບແຫ່ງຈິດ ຄວາມວຸ້ນວາຍໃຈ ຄວາມທີ່ຈິດດີ້ນຣົນ ນີ້ຮຽກວ່າອຸດທັດຈະ

[໑໔໔໔] ອະຫິຣິກະ ເປັນແນວໃດ?

ກິຣິຍາທີ່ບໍ່ລະອາຍຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນລະອາຍ ກິຣິຍາທີ່ບໍ່ລະອາຍຕໍ່ການປະກອບທຳທີ່ເປັນອະກຸສົນເຊິ່ງເປັນບາບ ນີ້ຮຽກວ່າ ອະຫິຣິກະ

[໑໔໔໕] ອະໂນດຕັບປະ ເປັນແນວໃດ?

ກິຣິຍາທີ່ບໍ່ຢ້ານຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນຢ້ານ ກິຣິຍາທີ່ບໍ່ຢ້ານຕໍ່ການປະກອບທຳທີ່ເປັນອະກຸສົນເຊິ່ງເປັນບາບ ນີ້ຮຽກວ່າອະໂນດຕັບປະ ສະພາວະທຳເຫຼົ່ານີ້ຊື່ວ່າເປັນກິເລດ

[໑໔໔໖] ສະພາວະທຳທີ່ບໍ່ເປັນກິເລດ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນກິເລດເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ฯລฯ ວິນຍານຂັນ ຮູບທັງໝົດແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ເປັນກິເລດ

## ໔. ສັງກິເລສິກະທຸກະ

[໑໔໔໗] ສະພາວະທຳທີ່ເປັນອາລົມຂອງກິເລດ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ฯລฯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນອາລົມຂອງກິເລດ

[໑໔໔໗] ສະພາວະທຳທີ່ບໍ່ເປັນອາລົມຂອງກິເລດ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນອາລົມຂອງກິເລດ

## ໓. ສັງກິລິດຖະທຸກະ

[໑໔໔໘] ສະພາວະທຳທີ່ກິເລດເຮັດໃຫ້ເສົ້າໝອງ ເປັນແນວໃດ?

ອະກຸສົນມູນ ໓ ຄື ໂລພະ ໂທສະ ໂມຫະ ແລະກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບ ອະກຸສົນມູນນັ້ນ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນທີ່ສຳປະຍຸດດ້ວຍອະກຸສົນມູນນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳ ທີ່ມີອະກຸສົນມູນນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າກິເລດເຮັດໃຫ້ເສົ້າໝອງ

[໑໔໕໐] ສະພາວະທຳທີ່ກິເລດບໍ່ເຮັດໃຫ້ເສົ້າໝອງ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ແລະອັບພະຍາກະຕະ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າກິເລດບໍ່ເຮັດໃຫ້ເສົ້າໝອງ

## ໔. ກິເລສະສຳປະຍຸດຕະທຸກະ

[໑໔໕໑] ສະພາວະທຳທີ່ສຳປະຍຸດດ້ວຍກິເລດ ເປັນແນວໃດ?

ສະພາວະທຳທີ່ສຳປະຍຸດດ້ວຍສະພາວະທຳທີ່ເປັນກິເລດ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍກິເລດ

[໑໔໕໒] ສະພາວະທຳທີ່ວິບປະຍຸດຈາກກິເລດ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກກິເລດ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ວິບປະຍຸດຈາກກິເລດ

## ໕. ກິເລສະສັງກິເລສິກະທຸກະ

[໑໔໕໓] ສະພາວະທຳທີ່ເປັນກິເລດແລະເປັນອາລົມຂອງກິເລດ ເປັນແນວໃດ?

ກິເລດນັ້ນ ໆ ຊື່ວ່າ ເປັນກິເລດແລະເປັນອາລົມຂອງກິເລດ

[໑໔໕໔] ສະພາວະທຳທີ່ເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນກິເລດເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະທີ່ເຫຼືອ ເປັນກາມາວະຈອນ ຮູບປາວະຈອນ

ແລະອະຣູບປາວະຈອນ ໄດ້ແກ່ ຣູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າເປັນອາລົມຂອງກິເລດແຕ່ບໍ່ເປັນກິເລດ

## ໖. ກິເລສະສັງກິລິດຖະທຸກະ

[໑໔໕໕] ສະພາວະທຳທີ່ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ ເປັນແນວໃດ?

ກິເລດນັ້ນ ໆ ຊື່ວ່າ ເປັນກິເລດແລະກິເລດເຮັດໃຫ້ເສົ້າໝອງ

[໑໔໕໖] ສະພາວະທຳທີ່ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນກິເລດເຫຼົ່ານັ້ນແລ້ວ ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າ ກິເລດເຮັດໃຫ້ເສົ້າໝອງແຕ່ບໍ່ເປັນກິເລດ

## ໗. ກິເລສະກິເລສະສຳປະຍຸດຕະທຸກະ

[໑໔໕໗] ສະພາວະທຳທີ່ເປັນກິເລດແລະສຳປະຍຸດດ້ວຍກິເລດ ເປັນແນວໃດ?

ໂລພະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂມຫະ ໂມຫະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂລພະ ໂທສະເປັນກິເລດແລະສຳປະຍຸດດ້ວຍກິເລດ ຍ້ອນໂມຫະ ໂມຫະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂທສະ ມານະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂມຫະ ໂມຫະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນມານະທິດຖິເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂມຫະ ໂມຫະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນທິດຖິ ວິຈິກິດສາເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂມຫະ ໂມຫະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນວິຈິກິດສາ ຖີນະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂມຫະ ໂມຫະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນຖີນະ ອຸດທັດຈະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂມຫະ ໂມຫະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອຸດທັດຈະ ອະຫິຣິກະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂມຫະ ໂມຫະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະຫິຣິກະ ອະໂນດຕັບປະ ເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂມຫະ ໂມຫະເປັນກິເລດແລະສຳປະຍຸດດ້ວຍກິເລດ ຍ້ອນອະໂນດຕັບປະໂລພະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອຸດທັດຈະ ອຸດທັດຈະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂລພະ ໂທສະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອຸດທັດຈະ ອຸດທັດຈະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂທສະ ໂມຫະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອຸດທັດຈະ ອຸດທັດຈະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂມຫະ ມານະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອຸດທັດຈະ ອຸດທັດຈະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນມານະ ທິດຖິເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອຸດທັດຈະ ອຸດທັດຈະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນທິດຖິ ວິຈິກິດສາເປັນກິເລດ

ແລະສຳປະຍຸດດ້ວຍກິເລດຍ້ອນອຸດທັດຈະ ອຸດທັດຈະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນ
ວິຈິກິດສາ ຖີນະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອຸດທັດຈະ ອຸດທັດຈະເປັນກິເລດ
ແລະສຳປະຍຸດດ້ວຍກິເລດຍ້ອນຖີນະ ອະຫິຣິກະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອຸດ
ທັດຈະ ອຸດທັດຈະ ເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະຫິຣິກະ ອະໂນດຕັບປະເປັນ
ກິເລດແລະສຳປະຍຸດດ້ວຍກິເລດຍ້ອນອຸດທັດຈະ ອຸດທັດຈະເປັນກິເລດແລະສຳປະຍຸດດ້ວຍ
ກິເລດຍ້ອນອະໂນດຕັບປະ ໂລພະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະຫິຣິກະ ອະຫິຣິ
ກະເປັນກິເລດແລະສຳປະຍຸດ ດ້ວຍກິເລດຍ້ອນໂລພະ ໂທສະເປັນກິເລດແລະສຳປະຍຸດດ້ວຍ
ກິເລດຍ້ອນອະຫິຣິກະ ອະຫິຣິກະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂທສະ ໂມຫະເປັນ
ກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະຫິຣິກະ ອະຫິຣິກະເປັນກິເລດແລະສຳປະຍຸດດ້ວຍ
ກິເລດຍ້ອນໂມຫະ ມານະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະຫິຣິກະ ອະຫິຣິກະເປັນກິ
ເລດແລະສຳປະຍຸດດ້ວຍກິເລດຍ້ອນມານະ ທິດຖິເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນ
ອະຫິຣິກະ ອະຫິຣິກະເປັນກິເລດແລະ ສຳປະຍຸດດ້ວຍກິເລດຍ້ອນທິດຖິ ວິຈິກິດສາເປັນກິເລດ
ແລະສຳປະຍຸດດ້ວຍກິເລດຍ້ອນອະຫິຣິກະ ອະຫິຣິກະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນ
ວິຈິກິດສາ ຖີນະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະຫິຣິກະ ອະຫິຣິກະເປັນກິເລດແລະ
ສຳປະຍຸດດ້ວຍກິເລດຍ້ອນຖີນະ ອຸດທັດຈະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະຫິຣິກະ
ອະຫິຣິກະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອຸດທັດຈະ ອະໂນດຕັບປະເປັນກິເລດແລະ
ສຳປະຍຸດດ້ວຍກິເລດຍ້ອນອະຫິຣິກະ ອະຫິຣິກະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະ
ໂນດຕັບປະ ໂລພະເປັນກິເລດແລະ ສຳປະຍຸດດ້ວຍກິເລດຍ້ອນອະໂນດຕັບປະ ອະໂນດຕັບປະ
ເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂລພະ ໂທສະເປັນກິເລດແລະສຳປະຍຸດດ້ວຍກິເລດ
ຍ້ອນອະໂນດຕັບປະ ອະໂນດຕັບປະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນໂທສະ ໂມຫະ
ເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະໂນດຕັບປະ ອະໂນດຕັບປະເປັນກິເລດແລະສຳປະ
ຍຸດດ້ວຍກິເລດຍ້ອນໂມຫະ ມານະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະໂນດຕັບປະ
ອະໂນດຕັບປະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນມານະ ທິດຖິເປັນກິເລດແລະສຳປະຍຸດ
ດ້ວຍກິເລດຍ້ອນອະໂນດຕັບປະ ອະໂນດຕັບປະ ເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນທິດ
ຖິ ວິຈິກິດສາເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະໂນດຕັບປະ ອະໂນດຕັບປະເປັນ
ກິເລດແລະສຳປະຍຸດດ້ວຍກິເລດຍ້ອນວິຈິກິດສາ ຖີນະເປັນກິເລດແລະສຳປະຍຸດດ້ວຍກິເລດ
ຍ້ອນອະໂນດຕັບປະ ອະໂນດຕັບປະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນຖີນະ ອຸດທັດຈະ
ເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະໂນດຕັບປະ ອະໂນດຕັບປະເປັນກິເລດແລະສຳປະ
ຍຸດດ້ວຍກິເລດຍ້ອນອຸດທັດຈະ ອະຫິຣິກະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະໂນດຕັບ
ປະ ອະໂນດຕັບປະເປັນກິເລດແລະສຳປະຍຸດດ້ວຍກິເລດຍ້ອນອະຫິຣິກະ ສະພາວະທຳເຫຼົ່ານີ້ຊື່
ວ່າເປັນກິເລດແລະສຳປະຍຸດດ້ວຍກິເລດ

[໑໘໕໗] ສະພາວະທຳທີ່ສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນກິເລດເຫຼົ່ານັ້ນແລ້ວ ສະພາວະທຳສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າສຳປະຍຸດດ້ວຍກິເລດແຕ່ບໍ່ເປັນກິເລດ

## ໗. ກິເລສະວິບປະຍຸດຕະສັງກິເລສິກະທຸກະ

[໑໘໕໙] ສະພາວະທຳທີ່ວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດ ເປັນແນວໃດ?

ສະພາວະທຳທີ່ວິບປະຍຸດຈາກກິເລດເຫຼົ່ານັ້ນ ຄື ສະພາວະທຳທີ່ເປັນກຸສົນ ແລະ ອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ຯລຯ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າວິບປະຍຸດຈາກກິເລດແຕ່ເປັນອາລົມຂອງກິເລດ

[໑໘໖໐] ສະພາວະທຳທີ່ວິບປະຍຸດຈາກກິເລດ ແລະບໍ່ເປັນອາລົມຂອງກິເລດເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງສະພາວະທຳເຫຼົ່ານີ້ຊື່ວ່າວິບປະຍຸດຈາກກິເລດແລະບໍ່ເປັນອາລົມຂອງກິເລດ

**ກິເລສະໂຄດສະກະ ຈົບ**

## ໑໓. ປິດຖິທຸກະ

## ໑. ທັດສະເນນະປະຫາຕັບພະທຸກະ

[໑໘໖໑] ສະພາວະທຳທີ່ຕ້ອງປະຫານດ້ວຍໂສດາປັດຕິມັກ ເປັນແນວໃດ?

ສັງໂຍດ ໓ ຄື

໑. ສັກກາຍະທິດຖິ

໒. ວິຈິກິດສາ

໓. ສີລັບພະຕະປະຣາມາດ

[໑໘໖໒] ບັນດາສັງໂຍດ ໓ ນັ້ນ ສັກກາຍະທິດຖິ ເປັນແນວໃດ?

ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການຝຶກຝົນໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການຝຶກຝົນໃນທຳຂອງສັດຕະບຸຣຸດ ຍ່ອມເຫັນຮູບເປັນຕົນຫຼືເຫັນຕົນມີຮູບ

ເຫັນຮູບໃນຕົນຫຼືເຫັນຕົນໃນຮູບ ເຫັນເວທະນາ ฯລฯ ສັນຍາ ฯລฯ ສັງຂານ ฯລฯ ວິນຍານ ເປັນຕົນ ຫຼື ເຫັນຕົນມີວິນຍານ ເຫັນວິນຍານໃນຕົນ ຫຼື ເຫັນຕົນໃນວິນຍານ ທິດຖິ ຄວາມເຫັນຜິດ ฯລฯ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ສັກກາຍະທິດຖິ

[໑໔໗໓] ວິຈິກິດສາ ເປັນແນວໃດ?

ປຸຖຸຊົນຍ່ອມເຄືອບແຄງສົງໄສໃນພຣະສາດສະດາ ฯລฯ ຄວາມກະດ້າງແຫ່ງຈິດ ຄວາມລັງເລໃຈ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ວິຈິກິດສາ

[໑໔໗໔] ສີລັບພະຕະປະຣາມາດ ເປັນແນວໃດ?

ສະມະນະພາມພາຍນອກແຕ່ສາດສະໜານີ້ມີຄວາມເຫັນວ່າ ຄວາມບໍລິສຸດຍ່ອມມີໄດ້ ດ້ວຍສີນ ດ້ວຍພົດ ດ້ວຍສີນແລະພົດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ฯລฯ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າສີລັບພະຕະປະຣາມາດ

ສັງໂຍດ ໓ ດັ່ງກ່າວມານີ້ແລະກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບສັງໂຍດ ໓ ນັ້ນ ໄດ້ແກ່ ເວທະນາຂັນ ฯລฯ ວິນຍານຂັນ ທີ່ສຳປະຍຸດດ້ວຍສັງໂຍດ ໓ ນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳ ທີ່ມີສັງໂຍດ ໓ ນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າ ຕ້ອງປະຫານດ້ວຍໂສດາປັດຕິມັກ

[໑໔໗໕] ສະພາວະທຳທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນສັງໂຍດເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ฯລฯ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກ

## ໔. ພາວະນາຍະປະຫາຕັບພະທຸກະ

[໑໔໗໖] ສະພາວະທຳທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນແນວໃດ?

ໂລພະ ໂທສະ ໂມຫະ ທີ່ເຫຼືອ ແລະກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບໂລພະ ໂທສະ ໂມຫະນັ້ນ ໄດ້ແກ່ ເວທະນາຂັນ ฯລฯ ວິນຍານຂັນທີ່ສຳປະຍຸດດ້ວຍ ໂລພະ ໂທສະ ໂມຫະ ນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳ ທີ່ມີໂລພະ ໂທສະ ໂມຫະນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າ ຕ້ອງປະຫານດ້ວຍມັກເບື້ອງເທິງ ໓

[໑໔໗໗] ສະພາວະທຳທີ່ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນແນວໃດ?

ເວັ້ນສະພາວະທຳທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາ

ວະຈອນ ແລະໂລກຸດຕະຣະ ໄດ້ແກ່ ເວທະນາຂັນ ຯລຯ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓

## ໓. ທັດສະເນນະປະຫາຕັບພະເຫຕຸກະທຸກະ

[໑໘໖໘] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ເປັນແນວໃດ?

ສັງໂຍດ ໓ ຄື

໑. ສັກກາຍະທິດຖິ
໒. ວິຈິກິດສາ
໓. ສີລັບພະຕະປະຣາມາດ

[໑໘໖໙] ບັນດາສັງໂຍດ ໓ ນັ້ນ ສັກກາຍະທິດຖິ ເປັນແນວໃດ?

ປຸຖຸຊົນໃນໂລກນີ້ຜູ້ບໍ່ໄດ້ສະດັບ ບໍ່ໄດ້ເຫັນພຣະອະຣິຍະ ບໍ່ສະຫຼາດໃນທຳຂອງພຣະອະຣິຍະ ບໍ່ໄດ້ຮັບການຝຶກຝົນໃນທຳຂອງພຣະອະຣິຍະ ບໍ່ໄດ້ເຫັນສັດຕະບຸຣຸດບໍ່ສະຫຼາດໃນທຳຂອງສັດຕະບຸຣຸດ ບໍ່ໄດ້ຮັບການຝຶກຝົນໃນທຳຂອງສັດຕະບຸຣຸດ ຍ່ອມເຫັນຮູບເປັນຕົນ ຫຼືເຫັນຕົນມີຮູບ ເຫັນຮູບໃນຕົນຫຼືເຫັນຕົນໃນຮູບ ເຫັນເວທະນາ ຯລຯ ສັນຍາ ຯລຯ ສັງຂານ ຯລຯ ວິນຍານເປັນຕົນຫຼືເຫັນຕົນມີວິນຍານ ເຫັນວິນຍານໃນຕົນ ຫຼື ເຫັນຕົນໃນວິນຍານ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ສັກກາຍະທິດຖິ

[໑໘໗໐] ວິຈິກິດສາ ເປັນແນວໃດ?

ປຸຖຸຊົນຍ່ອມເຄືອບແຄງສົງໄສໃນພຣະສາດສະດາ ຯລຯ ຄວາມກະດ້າງແຫ່ງຈິດ ຄວາມລັງເລໃຈ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ວິຈິກິດສາ

[໑໘໗໑] ສີລັບພະຕະປະຣາມາດ ເປັນແນວໃດ?

ສະມະນະພາມພາຍນອກແຕ່ສາດສະໜານີ້ມີຄວາມເຫັນວ່າ ຄວາມບໍລິສຸດຍ່ອມມີໄດ້ ດ້ວຍສິນ ດ້ວຍພົດ ດ້ວຍສິນແລະພົດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຍຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ສີລັບພະຕະປະຣາມາດ

ສັງໂຍດ ໓ ເຫຼົ່ານີ້ ແລະກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບສັງໂຍດ ໓ ນັ້ນ ໄດ້ແກ່ເວທະນາຂັນ ຯລຯ ວິນຍານຂັນ ທີ່ສຳປະຍຸດດ້ວຍສັງໂຍດ ໓ ນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳ ທີ່ມີສັງໂຍດ ໓ ນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າມີເຫດ ຕ້ອງປະຫານດ້ວຍໂສດາປັດຕິມັກ ສັງໂຍດ ໓ ຄື ສັກກາຍະທິດຖິ ວິຈິກິດສາ ສີລັບພະຕະປະຣາມາດ ສະພາວະທຳເຫຼົ່ານີ້ຊື່ວ່າ ຕ້ອງປະຫານດ້ວຍໂສດາປັດຕິມັກ ໂລພະ ໂທສະ ໂມຫະ ທີ່ຕັ້ງຢູ່ໃນຖານດຽວກັນກັບສັງໂຍດ ໓ ນັ້ນ ສະພາວະທຳເຫຼົ່ານີ້ຊື່ວ່າ ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ສ່ວນ

ກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບໂລພະ ໂທສະ ໂມຫະນັ້ນ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນທີ່ສຳປະຍຸດດ້ວຍໂລພະ ໂທສະ ໂມຫະ ນັ້ນ ກາຍຍະກຳ ວະຈີກຳ ມະໂນກຳທີ່ມີໂລພະໂທສະ ໂມຫະນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າ ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ

[໑໔໗໔] ສະພາວະທຳທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ເປັນແນວໃດ?

ເວັ້ນສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ມີເຫດຕ້ອງປະຫານດ້ວຍ ໂສດາປັດຕິມັກ

## ໔. ພາວະນາຍະປະຫາຕັບພະເຫຕຸກະທຸກະ

[໑໔໗໓] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນແນວໃດ?

ໂລພະ ໂທສະ ແລະໂມຫະທີ່ເຫຼືອ ສະພາວະທຳເຫຼົ່ານີ້ຊື່ວ່າ ມີເຫດຕ້ອງປະຫານ ດ້ວຍມັກເບື້ອງເທິງ ໓ ສ່ວນກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບໂລພະ ໂທສະ ໂມຫະນັ້ນ ໄດ້ແກ່ເວທະນາຂັນ ໗ລ໗ ວິນຍານຂັນທີ່ສຳປະຍຸດດ້ວຍໂລພະ ໂທສະ ໂມຫະນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳ ທີ່ມີໂລພະ ໂທສະ ໂມຫະນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ ຊື່ວ່າມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓

[໑໔໗໔] ສະພາວະທຳທີ່ບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນແນວໃດ?

ເວັ້ນສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓

## ໕. ສະວິຕັກກະທຸກະ

[໑໔໗໕] ສະພາວະທຳທີ່ມີວິຕົກ ເປັນແນວໃດ?

ເວທະນາຂັນ ໗ລ໗ ວິນຍານຂັນ ທີ່ສຳປະຍຸດດ້ວຍວິຕົກໃນພູມແຫ່ງຈິດທີ່ມີວິຕົກ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ເວັ້ນວິຕົກແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ມີວິຕົກ

[๑๘๗๖] ສະພາວະທຳທີ່ບໍ່ມີວິຕົກ ເປັນແນວໃດ?

ເວທະນາຂັນ ໆລໆ ວິນຍານຂັນ ໃນພູມແຫ່ງຈິດທີ່ບໍ່ມີວິຕົກ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ວິຕົກ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ມີວິຕົກ

## ๖. ສະວິຈາຣະທຸກະ

[๑๘๗๗] ສະພາວະທຳທີ່ມີວິຈານ ເປັນແນວໃດ?

ເວທະນາຂັນ ໆລໆ ວິນຍານຂັນທີ່ສຳປະຍຸດດ້ວຍວິຈານນັ້ນໃນພູມແຫ່ງຈິດອັນມີວິຈານ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ເວັ້ນວິຈານແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າມີວິຈານ

[๑๘๗๘] ສະພາວະທຳທີ່ບໍ່ມີວິຈານ ເປັນແນວໃດ?

ເວທະນາຂັນ ໆລໆ ວິນຍານຂັນ ໃນພູມແຫ່ງຈິດທີ່ບໍ່ມີວິຈານ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ວິຈານ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ມີວິຈານ

## ๗. ສັບປີຕິກະທຸກະ

[๑๘๗๙] ສະພາວະທຳທີ່ມີປີຕິ ເປັນແນວໃດ?

ເວທະນາຂັນ ໆລໆ ວິນຍານຂັນ ທີ່ສຳປະຍຸດດ້ວຍປີຕິນັ້ນ ໃນພູມແຫ່ງຈິດທີ່ມີປີຕິ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ເວັ້ນປີຕິແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າມີປີຕິ

[๑๘๘๐] ສະພາວະທຳທີ່ບໍ່ມີປີຕິ ເປັນແນວໃດ?

ເວທະນາຂັນ ໆລໆ ວິນຍານຂັນ ໃນພູມແຫ່ງຈິດທີ່ບໍ່ມີປີຕິ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ປີຕິ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ມີປີຕິ

## ๘. ປີຕິສະຫະຄະຕະທຸກະ

[๑๘๘๑] ສະພາວະທຳທີ່ປະກອບດ້ວຍປີຕິ ເປັນແນວໃດ?

ເວທະນາຂັນ ໆລໆ ວິນຍານຂັນ ທີ່ສຳປະຍຸດດ້ວຍປີຕິນັ້ນ ໃນພູມແຫ່ງຈິດທີ່ປະກອບດ້ວຍປີຕິ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ເວັ້ນປີຕິແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າປະກອບດ້ວຍປີຕິ

[໑໘໗໘] ສະພາວະທຳທີ່ບໍ່ປະກອບດ້ວຍປີຕິ ເປັນແນວໃດ?

ເວທະນາຂັນ ຯລຯ ວິນຍານຂັນ ໃນພູມແຫ່ງຈິດທີ່ບໍ່ປະກອບດ້ວຍປີຕິ ເຊິ່ງເປັນ ກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ເວັ້ນປີຕິແລ້ວ ຮູບທັງໝົດແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ປະກອບດ້ວຍປີຕິ

## ໙. ສຸຂະສະຫະຄະຕະທຸກະ

[໑໘໗໓] ສະພາວະທຳທີ່ປະກອບດ້ວຍສຸກ ເປັນແນວໃດ?

ສັນຍາຂັນ ສັງຂານຂັນ ແລະວິນຍານຂັນ ທີ່ສຳປະຍຸດດ້ວຍສຸກນັ້ນ ໃນພູມແຫ່ງ ຈິດທີ່ປະກອບດ້ວຍສຸກ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ເວັ້ນສຸກແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ປະກອບດ້ວຍສຸກ

[໑໘໗໔] ສະພາວະທຳທີ່ບໍ່ປະກອບດ້ວຍສຸກ ເປັນແນວໃດ?

ເວທະນາຂັນ ຯລຯ ວິນຍານຂັນ ໃນພູມແຫ່ງຈິດທີ່ບໍ່ປະກອບດ້ວຍສຸກ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ສຸກ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ປະກອບດ້ວຍສຸກ

## ໑໐. ອຸເປກຂາສະຫະຄະຕະທຸກະ

[໑໘໗໕] ສະພາວະທຳທີ່ປະກອບດ້ວຍອຸເປກຂາ ເປັນແນວໃດ?

ສັນຍາຂັນ ສັງຂານຂັນ ວິນຍານຂັນ ທີ່ສຳປະຍຸດດ້ວຍອຸເປກຂານັ້ນ ໃນພູມແຫ່ງຈິດທີ່ປະກອບດ້ວຍອຸເປກຂາ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງ ໃນວັດຕະທຸກ ເວັ້ນອຸເປກຂາແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ປະກອບດ້ວຍອຸເປກຂາ

[໑໘໗໖] ສະພາວະທຳທີ່ບໍ່ປະກອບດ້ວຍອຸເປກຂາ ເປັນແນວໃດ?

ເວທະນາຂັນ ຯລຯ ວິນຍານຂັນ ໃນພູມແຫ່ງຈິດທີ່ບໍ່ປະກອບດ້ວຍອຸເປກຂາ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ອຸເປກຂາ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ປະກອບດ້ວຍອຸເປກຂາ

## ໑໑. ກາມາວະຈະຣະທຸກະ

[໑໘໗໗] ສະພາວະທຳທີ່ເປັນກາມາວະຈອນ ເປັນແນວໃດ?

ຂັນ ທາດ ອາຍະຕະນະ ຮູບ ເວທະນາ ສັນຍາ ສັງຂານ ແລະວິນຍານ ເຊິ່ງທ່ອງທ່ຽວຢູ່ນັບເນື່ອງຢູ່ໃນພູມລະຫວ່າງນີ້ ຄື ເບື້ອງຕໍ່າ ກຳນົດເອົາອະເວຈີມະຫານະຣົກເປັນບ່ອນສຸດ ເບື້ອງ

ສູງ ກໍານົດເອົາເທບຊັ້ນປະຣະນິມມິດຕະວະສະວັດຕີເປັນບ່ອນສຸດ ສະພາວະທໍາເຫຼົ່ານີ້ຊື່ວ່າເປັນການາວະຈອນ

[໑໔໗໗] ສະພາວະທໍາທີ່ບໍ່ເປັນການາວະຈອນ ເປັນແນວໃດ?

ສະພາວະທໍາທີ່ເປັນຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ສະພາວະທໍາເຫຼົ່ານີ້ຊື່ວ່າ ບໍ່ເປັນການາວະຈອນ

## ໑໔. ຮູບປາວະຈະຣະທຸກະ

[໑໔໗໘] ສະພາວະທໍາທີ່ເປັນຮູບປາວະຈອນ ເປັນແນວໃດ?

ສະພາວະທໍາທີ່ເປັນຈິດແລະເຈຕະສິກຂອງຜູ້ເຂົ້າສະມາບັດ ຂອງຜູ້ທີ່ກໍາລັງອຸບັດ ຫຼື ຂອງຜູ້ຢູ່ເປັນສຸກໃນປັດຈຸບັນ ທີ່ທ່ອງທ່ຽວຢູ່ນັບເນື່ອງຢູ່ໃນພູມລະຫວ່າງນີ້ ຄື ເບື້ອງຕໍ່າ ກໍານົດພົມໂລກເປັນບ່ອນສຸດ ເບື້ອງສູງ ກໍານົດເທບຊັ້ນອະກະນິດຖະພົບເປັນບ່ອນສຸດ ສະພາວະທໍາເຫຼົ່ານີ້ຊື່ວ່າເປັນຮູບປາວະຈອນ

[໑໔໘໐] ສະພາວະທໍາທີ່ບໍ່ເປັນຮູບປາວະຈອນ ເປັນແນວໃດ?

ສະພາວະທໍາທີ່ເປັນການາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ສະພາວະທໍາເຫຼົ່ານີ້ຊື່ວ່າ ບໍ່ເປັນຮູບປາວະຈອນ

## ໑໓. ອະຮູບປາວະຈະຣະທຸກະ

[໑໔໘໑] ສະພາວະທໍາທີ່ເປັນອະຮູບປາວະຈອນ ເປັນແນວໃດ?

ສະພາວະທໍາທີ່ເປັນຈິດແລະເຈຕະສິກຂອງຜູ້ເຂົ້າສະມາບັດ ຂອງຜູ້ທີ່ກໍາລັງອຸບັດ ຫຼື ຂອງຜູ້ຢູ່ເປັນສຸກໃນປັດຈຸບັນ ທີ່ທ່ອງທ່ຽວຢູ່ນັບເນື່ອງຢູ່ໃນພູມລະຫວ່າງນີ້ ຄື ເບື້ອງຕໍ່າກໍານົດເທບຜູ້ເຂົ້າເຖິງອາກາສານັນຈາຍະຕະນະພົບເປັນບ່ອນສຸດ ເບື້ອງສູງກໍານົດເທບຜູ້ເຂົ້າເຖິງເນວະສັນຍານາສັນຍາຍະຕະນະພົບເປັນບ່ອນສຸດ ສະພາວະທໍາເຫຼົ່ານີ້ຊື່ວ່າ ເປັນອະຮູບປາວະຈອນ

[໑໔໘໔] ສະພາວະທໍາທີ່ບໍ່ເປັນອະຮູບປາວະຈອນ ເປັນແນວໃດ?

ການາວະຈອນ ຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ສະພາວະທໍາເຫຼົ່ານີ້ຊື່ວ່າ ບໍ່ເປັນອະຮູບປາວະຈອນ

## ໑໔. ປະຣິຍາປັນນະທຸກະ

[໑໔໘໓] ສະພາວະທໍາທີ່ນັບເນື່ອງໃນວັດຕະທຸກ ເປັນແນວໃດ?

ສະພາວະທໍາທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນການາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ຯລຯ ວິນຍານຂັນ ສະພາວະທໍາເຫຼົ່ານີ້ຊື່ວ່າ ນັບເນື່ອງໃນວັດຕະທຸກ

[໑໘໔] ສະພາວະທຳທີ່ບໍ່ນັບເນື່ອງໃນວັດຕະທຸກ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ນັບເນື່ອງໃນວັດຕະທຸກ

## ໑໕. ນິຍຍານິກະທຸກະ

[໑໘໕] ສະພາວະທຳທີ່ເປັນເຫດນຳອອກຈາກວັດຕະທຸກ ເປັນແນວໃດ?

ມັກ ໔ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນເຫດນຳອອກຈາກວັດຕະທຸກ

[໑໘໖] ສະພາວະທຳທີ່ບໍ່ເປັນເຫດນຳອອກຈາກວັດຕະທຸກ ເປັນແນວໃດ?

ເວັ້ນສະພາວະທຳທີ່ເປັນເຫດນຳອອກຈາກວັດຕະທຸກເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເຫຼືອ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ຮູບທັງໝົດ ແລະທາດ ທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນເຫດນຳອອກຈາກວັດຕະທຸກ

## ໑໖. ນິຍະຕະທຸກະ

[໑໘໗] ສະພາວະທຳທີ່ໃຫ້ຜົນແນ່ນອນ ເປັນແນວໃດ?

ອະນັນຕະຣິຍະກຳ ໕ ມິດສາທິດຖິທີ່ໃຫ້ຜົນແນ່ນອນ ແລະມັກ ໔ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສະພາວະທຳເຫຼົ່ານີ້ຊື່ວ່າໃຫ້ຜົນແນ່ນອນ

[໑໘໘] ສະພາວະທຳທີ່ບໍ່ແນ່ນອນໂດຍອາການທັງສອງນັ້ນ ເປັນແນວໃດ?

ເວັ້ນສະພາວະທຳທີ່ໃຫ້ຜົນແນ່ນອນເຫຼົ່ານັ້ນແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະ ອັບພະຍາກະຕະທີ່ເຫຼືອ ເຊິ່ງເປັນກາມາວະຈອນ ຮູບປາວະຈອນ ອະຮູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ໗ລ໗ ວິນຍານຂັນ ຮູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ແນ່ນອນໂດຍອາການທັງສອງນັ້ນ

## ໑໗. ສະອຸດຕະຣະທຸກະ

[໑໘໙] ສະພາວະທຳທີ່ມີທຳອື່ນຍິ່ງກວ່າ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະ ເຊິ່ງເປັນອາລົມຂອງອາສະວະ ເປັນກາມາວະຈອນ ຮູບປາວະຈອນ ແລະອະຮູບປາວະຈອນ ໄດ້ແກ່ ຮູບຂັນ ໗ລ໗ ວິນຍານຂັນ ສະພາວະທຳເຫຼົ່ານີ້ຊື່ວ່າມີທຳອື່ນຍິ່ງກວ່າ

[໑໓໐໐] ສະພາວະທຳທີ່ບໍ່ມີທຳອື່ນຍິ່ງກວ່າ ເປັນແນວໃດ?

ມັກ ຜົນຂອງມັກທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະທາດທີ່ປັດໄຈບໍ່ປຸງແຕ່ງສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ມີທຳອື່ນຍິ່ງກວ່າ

## ໑໗. ສະຣະນະທຸກະ

[໑໓໐໑] ສະພາວະທຳທີ່ເປັນເຫດໃຫ້ສັດຮ້ອງໄຫ້ ເປັນແນວໃດ?

ອະກຸສົນມູນ ໓ ຄື ໂລພະ ໂທສະ ໂມຫະ ແລະກິເລດທີ່ຕັ້ງຢູ່ໃນຖານດຽວກັນກັບ ອະກຸສົນມູນນັ້ນ ໄດ້ແກ່ ເວທະນາຂັນ ໆລໆ ວິນຍານຂັນທີ່ສຳປະຍຸດດ້ວຍອະກຸສົນມູນນັ້ນ ກາຍຍະກຳ ວະຈີກຳ ແລະມະໂນກຳ ທີ່ມີອະກຸສົນມູນນັ້ນເປັນສະມຸດຖານ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນເຫດໃຫ້ສັດຮ້ອງໄຫ້

[໑໓໐໒] ສະພາວະທຳທີ່ບໍ່ເປັນເຫດໃຫ້ສັດຮ້ອງໄຫ້ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນແລະອັບພະຍາກະຕະເຊິ່ງເປັນກາມາວະຈອນ ຣູບປາວະຈອນ ອະຣູບປາວະຈອນ ແລະທີ່ບໍ່ນັບເນື່ອງໃນວັດຕະທຸກ ໄດ້ແກ່ ເວທະນາຂັນ ໆລໆ ວິນຍານຂັນ ຣູບທັງໝົດ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນເຫດໃຫ້ສັດຮ້ອງໄຫ້

**ອະພິທຳມະທຸກະນິກະເຂປະ ຈົບ**

## ສຸດຕັນຕິກະທຸກະນິກະເຂປະ

## ໑. ວິດຊາພາຄີທຸກະ

[໑໓໐໓] ທຳທີ່ເປັນສ່ວນແຫ່ງວິດຊາ ເປັນແນວໃດ?

ທຳທີ່ສຳປະຍຸດດ້ວຍວິດຊາ ທຳເຫຼົ່ານີ້ຊື່ວ່າ ເປັນສ່ວນແຫ່ງວິດຊາ

[໑໓໐໔] ທຳທີ່ເປັນສ່ວນແຫ່ງອະວິດຊາ ເປັນແນວໃດ?

ທຳທີ່ສຳປະຍຸດດ້ວຍອະວິດຊາ ທຳເຫຼົ່ານີ້ຊື່ວ່າ ເປັນສ່ວນແຫ່ງອະວິດຊາ

## ໒. ວິດຊູປະມະທຸກະ

[໑໓໐໕] ທຳທີ່ປຽບເໝືອນສາຍຟ້າ ເປັນແນວໃດ?

ປັນຍາໃນອະຣິຍະມັກ ໓ ເບື້ອງຕ່ຳ ທຳເຫຼົ່ານີ້ຊື່ວ່າ ປຽບເໝືອນສາຍຟ້າ

[໑໓໐໖] ທຳທີ່ປຽບເໝືອນຟ້າຜ່າ ເປັນແນວໃດ?
ປັນຍາໃນອະຣະຫັດຕະມັກອັນເປັນມັກເບື້ອງສູງທຳເຫຼົ່ານີ້ຊື່ວ່າປຽບເໝືອນຟ້າຜ່າ

## ໓. ພາລະທຸກະ

[໑໓໐໗] ທຳທີ່ເຮັດໃຫ້ເປັນພານ ເປັນແນວໃດ?
ຄວາມບໍ່ລະອາຍບາບແລະຄວາມບໍ່ຢ້ານບາບ ທຳເຫຼົ່ານີ້ຊື່ວ່າ ເຮັດໃຫ້ເປັນພານ ອະກຸສົນທຳແມ່ນທັງໝົດຊື່ວ່າ ເຮັດໃຫ້ເປັນພານ

[໑໓໐໘] ທຳທີ່ເຮັດໃຫ້ເປັນບັນດິດ ເປັນແນວໃດ?
ຄວາມລະອາຍບາບ ແລະຄວາມເກງກົວບາບ ທຳເຫຼົ່ານີ້ຊື່ວ່າ ເຮັດໃຫ້ເປັນບັນດິດ ກຸສົນທຳແມ່ນທັງໝົດຊື່ວ່າ ເຮັດໃຫ້ເປັນບັນດິດ

## ໔. ກັນຫະທຸກະ

[໑໓໐໙] ທຳທີ່ດຳ ເປັນແນວໃດ?
ຄວາມບໍ່ລະອາຍບາບແລະຄວາມບໍ່ຢ້ານບາບ ທຳເຫຼົ່ານີ້ຊື່ວ່າ ທຳທີ່ດຳ ອະກຸສົນທຳແມ່ນທັງໝົດຊື່ວ່າ ທຳທີ່ດຳ

[໑໓໑໐] ທຳທີ່ຂາວ ເປັນແນວໃດ?
ຄວາມລະອາຍບາບແລະຄວາມຢ້ານບາບ ທຳເຫຼົ່ານີ້ຊື່ວ່າ ທຳທີ່ຂາວ ກຸສົນທຳແມ່ນທັງໝົດຊື່ວ່າ ທຳທີ່ຂາວ

## ໕. ຕະປະນີຍະທຸກະ

[໑໓໑໑] ທຳທີ່ເຮັດໃຫ້ຮ້ອນຮົນ ເປັນແນວໃດ?
ກາຍທຸດຈະຣິດ ວະຈີທຸດຈະຣິດ ແລະມະໂນທຸດຈະຣິດ ທຳເຫຼົ່ານີ້ຊື່ວ່າ ເຮັດໃຫ້ຮ້ອນຮົນ ອະກຸສົນທຳແມ່ນທັງໝົດຊື່ວ່າ ເຮັດໃຫ້ຮ້ອນຮົນ

[໑໓໑໒] ທຳທີ່ບໍ່ເຮັດໃຫ້ຮ້ອນຮົນ ເປັນແນວໃດ?
ກາຍສຸດຈະຣິດ ວະຈີສຸດຈະຣິດ ແລະມະໂນສຸດຈະຣິດ ທຳເຫຼົ່ານີ້ຊື່ວ່າ ບໍ່ເຮັດໃຫ້ຮ້ອນຮົນ ກຸສົນທຳແມ່ນທັງໝົດຊື່ວ່າ ບໍ່ເຮັດໃຫ້ຮ້ອນຮົນ

## ໖. ອະທິວະຈະນະປະຖາທຸກະ

[໑໓໑໓] ທຳທີ່ເປັນຊື່ ເປັນແນວໃດ?

ການກ່າວຂານ ສະມັນຍາ ບັນຍັດ ໂວຫານ ນາມ ການຂະໜານນາມ ການຕັ້ງຊື່ ການອອກຊື່ ການຣະບຸຊື່ ການຮຽກຊື່ແຫ່ງທຳນັ້ນ ໆ ທຳເຫຼົ່ານີ້ຊື່ວ່າ ທຳທີ່ເປັນຊື່

ທຳທັງໝົດຊື່ວ່າ ເປັນເຫດແຫ່ງຊື່

## ໗. ນິຣຸດຕິທຸກະ

[໑໓໑໔] ທຳທີ່ເປັນນິຣຸດຕິ ເປັນແນວໃດ?

ການກ່າວຂານ ສະມັນຍາ ບັນຍັດ ໂວຫານ ນາມ ການຂະໜານນາມ ການຕັ້ງຊື່ ການອອກຊື່ ການຣະບຸຊື່ ການຮຽກຊື່ແຫ່ງທຳນັ້ນ ໆ ທຳເຫຼົ່ານີ້ຊື່ວ່າ ເປັນນິຣຸດຕິ

ທຳທັງໝົດຊື່ວ່າ ເປັນເຫດແຫ່ງນິຣຸດຕິ

## ໘. ປັນຍັດຕິທຸກະ

[໑໓໑໕] ທຳທີ່ເປັນບັນຍັດ ເປັນແນວໃດ?

ການກ່າວຂານ ສະມັນຍາ ບັນຍັດ ໂວຫານ ນາມ ການຂະໜານນາມ ການຕັ້ງຊື່ ການອອກຊື່ ການຣະບຸຊື່ ການຮຽກຊື່ແຫ່ງທຳນັ້ນ ໆ ທຳເຫຼົ່ານີ້ຊື່ວ່າ ເປັນບັນຍັດ

ທຳທັງໝົດຊື່ວ່າ ເປັນເຫດແຫ່ງບັນຍັດ

## ໙. ນາມະຣູປະທຸກະ

[໑໓໑໖] ບັນດາທຳເຫຼົ່ານັ້ນ ນາມ ເປັນແນວໃດ?

ເວທະນາຂັນ ສັນຍາຂັນ ສັງຂານຂັນ ວິນຍານຂັນ ແລະທາດທີ່ປັດໄຈບໍ່ປຸງແຕ່ງ ນີ້ຮຽກວ່າ ນາມ

[໑໓໑໗] ຣູບ ເປັນແນວໃດ?

ມະຫາພູຕະຣູບ ໔ ແລະຣູບທີ່ອາໄສມະຫາພູຕະຣູບ ໔ ນີ້ຮຽກວ່າ ຣູບ

## ໑໐. ອະວິດຊາທຸກະ

[໑໓໑໘] ອະວິດຊາ ເປັນແນວໃດ?

ຄວາມບໍ່ຮູ້ ຄວາມບໍ່ເຫັນ ຯລຯ ຫຼົ້ມຄືອະວິດຊາ ອະກຸສົນມູນຄື ໂມຫະ ນີ້ຮຽກວ່າ ອະວິດຊາ

[໑໓໑໙] ພະວະຕັນຫາ ເປັນແນວໃດ?

ຄວາມພໍໃຈພົບ ຯລຯ ຄວາມມົກມຸ້ນໃນພົບ ໃນພົບທັງຫຼາຍ ນີ້ຮຽກວ່າພະວະຕັນຫາ

## ໑໑. ພະວະທິດຖິທຸກະ

[໑໓໔໐] ພະວະທິດຖິ ເປັນແນວໃດ?

ຄວາມເຫັນວ່າ ອັດຕາແລະໂລກຈັກມີ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖື ໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າພະວະທິດຖິ

[໑໓໔໑] ວິພະວະທິດຖິ ເປັນແນວໃດ?

ຄວາມເຫັນວ່າ ອັດຕາແລະໂລກຈັກບໍ່ມີ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖື ໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ວິພະວະທິດຖິ

## ໑໔. ສັດສະຕະທິດຖິທຸກະ

[໑໓໔໔] ສັດສະຕະທິດຖິ ເປັນແນວໃດ?

ຄວາມເຫັນວ່າ ອັດຕາແລະໂລກທ່ຽງ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖື ໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າ ສັດສະຕະທິດຖິ

[໑໓໔໓] ອຸດເສທະທິດຖິ ເປັນແນວໃດ?

ຄວາມເຫັນວ່າ ອັດຕາແລະໂລກຂາດສູນ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖື ໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າອຸດເສທະທິດຖິ

## ໑໓. ອັນຕະວາທິດຖິທຸກະ

[໑໓໔໔] ຄວາມເຫັນວ່າມີບ່ອນສຸດ ເປັນແນວໃດ?

ຄວາມເຫັນວ່າ ອັດຕາແລະໂລກມີບ່ອນສຸດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າຄວາມເຫັນວ່າ ມີບ່ອນສຸດ

[໑໓໔໕] ຄວາມເຫັນວ່າບໍ່ມີບ່ອນສຸດ ເປັນແນວໃດ?

ຄວາມເຫັນວ່າ ອັດຕາແລະໂລກບໍ່ມີບ່ອນສຸດ ດັ່ງນີ້ ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າຄວາມເຫັນວ່າບໍ່ມີບ່ອນສຸດ

## ໑໔. ປຸບພັນຕາທິດຖິທຸກະ

[໑໓໔໖] ຄວາມເຫັນພາຣົບສ່ວນອະດີດ ເປັນແນວໃດ?

ທິດຖິ ຄວາມເຫັນຜິດ ຯລຯ ຄວາມຢຶດຖືໂດຍວິປະລາດພາຣົບສ່ວນອະດີດເກີດຂຶ້ນ ນີ້ຮຽກວ່າຄວາມເຫັນພາຣົບສ່ວນອະດີດ

[໑໓໔໗] ຄວາມເຫັນຜາຣົບສ່ວນອະນາຄົດ ເປັນແນວໃດ?

ທິດຖິ ຄວາມເຫັນຜິດ ຯລຯ ຄວາມຍຶດຖືໂດຍວິປະລາດ ຜາຣົບສ່ວນອະນາຄົດເກີດຂຶ້ນ ນີ້ຮຽກວ່າຄວາມເຫັນຜາຣົບສ່ວນອະນາຄົດ

## ໑໕. ອະຫິຣິກະທຸກະ

[໑໓໔໘] ອະຫິຣິກະ ເປັນແນວໃດ?

ກິຣິຍາທີ່ບໍ່ລະອາຍຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນລະອາຍ ກິຣິຍາທີ່ບໍ່ລະອາຍຕໍ່ການປະກອບບາບອະກຸສົນທຳ ນີ້ຮຽກວ່າ ອະຫິຣິກະ

[໑໓໔໙] ອະໂນດັບປະ ເປັນແນວໃດ?

ກິຣິຍາທີ່ບໍ່ຢ້ານຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນຢ້ານ ກິຣິຍາທີ່ບໍ່ຢ້ານຕໍ່ການປະກອບບາບອະກຸສົນທຳ ນີ້ຮຽກວ່າ ອະໂນດັບປະ

## ໑໖. ຫິຣິທຸກະ

[໑໓໕໐] ຫິຣິ ເປັນແນວໃດ?

ກິຣິຍາທີ່ລະອາຍຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນລະອາຍ ກິຣິຍາທີ່ລະອາຍຕໍ່ການປະກອບບາບອະກຸສົນທຳ ນີ້ຮຽກວ່າ ຫິຣິ

[໑໓໕໑] ໂອດັບປະ ເປັນແນວໃດ?

ກິຣິຍາທີ່ຢ້ານຕໍ່ການປະພຶດທຸດຈະຣິດອັນເປັນສິ່ງທີ່ຄວນຢ້ານ ກິຣິຍາທີ່ຢ້ານຕໍ່ການປະກອບບາບອະກຸສົນທຳ ນີ້ຮຽກວ່າໂອດັບປະ

## ໑໗. ໂທວະຈັດສະຕາທຸກະ

[໑໓໕໔] ຄວາມເປັນຜູ້ວ່າຍາກ ເປັນແນວໃດ?

ກິຣິຍາຂອງຜູ້ວ່າຍາກ ພາວະຂອງຜູ້ວ່າຍາກ ຄວາມເປັນຜູ້ວ່າຍາກ ຄວາມຍຶດຖືຂ້າງ ຂັດຂືນ ຄວາມພໍໃຈໃນການໂຕ້ແຍ້ງ ຄວາມບໍ່ເອື້ອເຟື້ອ ພາວະແຫ່ງຜູ້ບໍ່ເອື້ອເຟື້ອ ຄວາມບໍ່ ເຄົາຣົບ ແລະການບໍ່ຮັບຟັງ ໃນເມື່ອຖືກວ່າກ່າວໂດຍຊອບ ນີ້ຮຽກວ່າ ຄວາມເປັນຜູ້ວ່າຍາກ

[໑໓໕໕] ຄວາມເປັນຜູ້ມີມິດຊົ່ວ ເປັນແນວໃດ?

ບຸກຄົນຜູ້ບໍ່ມີສັດທາ ທຸສີນ ສະດັບມາໜ້ອຍ ມີຄວາມຫວງ ມີປັນຍາຊາມ ການເສບ ການສ້ອງເສບ ການສ້ອງເສບດ້ວຍດີ ການຄົບ ການຄົບຫາ ຄວາມພັກດີ ຄວາມຈົງຮັກພັກດີຕໍ່ບຸກ

ຄົນເຫຼົ່ານັ້ນ ຄວາມເປັນຜູ້ມີກາຍ ແລະໃຈເອນອຽງໄປຕາມບຸກຄົນເຫຼົ່ານັ້ນ ນີ້ຮຽກວ່າຄວາມເປັນຜູ້ມີມິດຊົ່ວ

## ໑໗. ໂສວະຈັດສະຕາທຸກະ

[໑໓໓໔] ຄວາມເປັນຜູ້ວ່າງ່າຍ ເປັນແນວໃດ?

ກິຣິຍາຂອງຜູ້ວ່າງ່າຍ ພາວະຂອງຜູ້ວ່າງ່າຍ ຄວາມເປັນຜູ້ວ່າງ່າຍ ຄວາມບໍ່ຍຶດຖືຂ້າງ ຂັດຂືນ ຄວາມບໍ່ພໍໃຈໃນການໂຕ້ແຍ້ງ ຄວາມເອື້ອເຟື້ອ ພາວະແຫ່ງຄວາມເອື້ອເຟື້ອ ຄວາມເປັນຜູ້ມີຄວາມເຄົາຣົບ ແລະການຮັບຟັງ ໃນເມື່ອຖືກສຫທຳມິກະວ່າກ່າວຢູ່ ນີ້ຮຽກວ່າຄວາມເປັນຜູ້ວ່າງ່າຍ

[໑໓໓໕] ຄວາມເປັນຜູ້ມີມິດດີ ເປັນແນວໃດ?

ບຸກຄົນຜູ້ມີສັດທາ ມີສິນ ເປັນພະຫູສູດ ມີຈາຄະ ມີປັນຍາ ການເສບ ການສ້ອງເສບ ການສ້ອງເສບດ້ວຍດີ ການຄົບ ການຄົບຫາ ຄວາມພັກດີ ຄວາມຈົງຮັກພັກດີ ຕໍ່ບຸກຄົນ ເຫຼົ່ານັ້ນ ຄວາມເປັນຜູ້ມີກາຍ ແລະໃຈເອນອຽງໄປຕາມບຸກຄົນເຫຼົ່ານັ້ນ ນີ້ຮຽກວ່າ ຄວາມເປັນຜູ້ມີມິດດີ

## ໑໘. ອາປັດຕິກຸສະລະຕາທຸກະ

[໑໓໓໖] ຄວາມເປັນຜູ້ສະຫຼາດໃນອາບັດ ເປັນແນວໃດ?

ອາບັດທັງ ໕ ກອງ ໗ ກອງ ຮຽກວ່າອາບັດ ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມ ບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທີ່ເປັນເຫດສະຫຼາດໃນອາບັດ ນັ້ນ ໆ ນີ້ ຮຽກວ່າ ຄວາມເປັນຜູ້ສະຫຼາດໃນອາບັດ

[໑໓໓໗] ຄວາມເປັນຜູ້ສະຫຼາດໃນການອອກຈາກອາບັດ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທີ່ເປັນເຫດສະຫຼາດໃນການອອກຈາກອາບັດເຫຼົ່ານັ້ນ ນີ້ຮຽກວ່າຄວາມເປັນຜູ້ສະຫຼາດໃນການອອກຈາກອາບັດ

## ໔໐. ສະມາປັດຕິກຸສະລະຕາທຸກະ

[໑໓໓໘] ຄວາມເປັນຜູ້ສະຫຼາດໃນສະມາບັດ ເປັນແນວໃດ?

ສະມາບັດທີ່ມີທັງວິຕົກ ແລະວິຈານກໍມີ ສະມາບັດທີ່ບໍ່ມີວິຕົກມີພຽງວິຈານກໍມີ ສະມາບັດທີ່ບໍ່ມີທັງວິຕົກແລະວິຈານກໍມີ ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມເລືອກເຟັ້ນທຳ ສຳມາທິດຖິ ທີ່ເປັນເຫດສະຫຼາດໃນສະມາບັດແຫ່ງສະມາບັດເຫຼົ່ານັ້ນ ນີ້ຮຽກວ່າຄວາມເປັນຜູ້ສະຫຼາດໃນສະມາບັດ

[໑໓໓໙] ຄວາມເປັນຜູ້ສະຫຼາດໃນການອອກຈາກສະມາບັດ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທີ່ເປັນເຫດສະຫຼາດໃນການອອກຈາກສະມາບັດເຫຼົ່ານັ້ນ ນີ້ຮຽກວ່າຄວາມເປັນຜູ້ສະຫຼາດໃນການອອກຈາກສະມາບັດ

## ໒໑. ທາຕຸກຸສະລະຕາທຸກະ

[໑໓໔໐] ຄວາມເປັນຜູ້ສະຫຼາດໃນທາດ ເປັນແນວໃດ?

ທາດ ໑໘ ຄື

໑. ຈັກຂຸທາດ
໒. ຈັກຂຸວິນຍານທາດ
໓. ສັດທະທາດ
໗. ຄານະທາດ
໙. ຄານະວິນຍານທາດ
໑໑. ຣະສະທາດ
໑໓. ກາຍະທາດ
໑໕. ກາຍະວິນຍານທາດ
໑໗. ທຳມະທາດ
໒. ຮູບທາດ
໔. ໂສຕະທາດ
໖. ໂສຕະວິນຍານທາດ
໘. ຄັນທະທາດ
໑໐. ຊິວຫາທາດ
໑໒. ຊິວຫາວິນຍານທາດ
໑໔. ໂຜດຖັບພະທາດ
໑໖. ມະໂນທາດ
໑໘. ມະໂນວິນຍານທາດ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທີ່ເປັນເຫດສະຫຼາດໃນທາດເຫຼົ່ານັ້ນ ນີ້ຮຽກວ່າ ຄວາມເປັນຜູ້ສະຫຼາດໃນທາດ

[໑໓໔໑] ຄວາມເປັນຜູ້ສະຫຼາດໃນມະນະສິການ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທີ່ເປັນເຫດສະຫຼາດໃນການພິຈາລະນາທາດເຫຼົ່ານັ້ນ ນີ້ຮຽກວ່າຄວາມເປັນຜູ້ສະຫຼາດໃນການພິຈາລະນາ

## ໒໒. ອາຍະຕະນະກຸສະລະຕາທຸກະ

[໑໓໔໒] ຄວາມເປັນຜູ້ສະຫຼາດໃນອາຍະຕະນະ ເປັນແນວໃດ?

ອາຍະຕະນະ ໑໒ ຄື

໑. ຈັກຂາຍະຕະນະ
໓. ໂສຕາຍະຕະນະ
໕. ຄານາຍະຕະນະ
໒. ຮູປາຍະຕະນະ
໔. ສັດທາຍະຕະນະ
໖. ຄັນທາຍະຕະນະ

໗. ຊິວຫາຍະຕະນະ　　　໘. ຣະສາຍະຕະນະ
໙. ກາຍາຍະຕະນະ　　　໑໐. ໂຜດຖັບພາຍະຕະນະ
໑໑. ມະນາຍະຕະນະ　　　໑໒. ທຳມາຍະຕະນະ

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ທີ່ເປັນເຫດສະຫຼາດໃນອາຍະຕະນະແຫ່ງອາຍະຕະນະເຫຼົ່ານັ້ນ ນີ້ຮຽກວ່າຄວາມເປັນຜູ້ສະຫຼາດໃນອາຍະຕະນະ

[໑໓໔໓] ຄວາມເປັນຜູ້ສະຫຼາດໃນປະຕິດຈະສະມຸບບາດ ເປັນແນວໃດ?

ປະຕິດຈະສະມຸບບາດທີ່ວ່າ ຍ້ອນອະວິດຊາເປັນປັດໄຈ ສັງຂານຈຶ່ງມີ ຍ້ອນສັງຂານ ເປັນປັດໄຈ ວິນຍານຈຶ່ງມີ ຍ້ອນວິນຍານເປັນປັດໄຈ ນາມຣູບຈຶ່ງມີ ຍ້ອນນາມຣູບເປັນປັດໄຈ ສະລາຍະຕະນະຈຶ່ງມີ ຍ້ອນສະລາຍະຕະນະເປັນປັດໄຈ ຜັດສະຈຶ່ງມີ ຍ້ອນຜັດສະເປັນປັດໄຈ ເວທະນາຈຶ່ງມີ ຍ້ອນເວທະນາເປັນປັດໄຈ ຕັນຫາຈຶ່ງມີ ຍ້ອນຕັນຫາເປັນປັດໄຈ ອຸປາທານຈຶ່ງມີ ຍ້ອນອຸປາທານເປັນປັດໄຈ ພົບຈຶ່ງມີ ຍ້ອນພົບເປັນປັດໄຈ ຊາດຈຶ່ງມີ ຍ້ອນຊາດເປັນປັດໄຈ ຊະຣາມໍຣະນະ ໂສກະ ປະຣິເທວະ ທຸກ ໂທມະນັດ ອຸປາຍາດຈຶ່ງມີ ຄວາມເກີດຂຶ້ນແຫ່ງກອງທຸກທັງມວນນີ້ ມີໄດ້ດ້ວຍປະການດັ່ງນີ້ ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ໃນປະຕິດຈະສະມຸບບາດນັ້ນ ນີ້ຮຽກວ່າຄວາມເປັນຜູ້ສະຫຼາດໃນປະຕິດຈະສະມຸບບາດ

## ໒໓. ຖານະກຸສະລະຕາທຸກະ

[໑໓໔໔] ຄວາມເປັນຜູ້ສະຫຼາດໃນຖານະ ເປັນແນວໃດ?

ທຳໃດ ໆ ເປັນເຫດເປັນປັດໄຈ ເພື່ອຄວາມບັງເກີດຂຶ້ນແຫ່ງທຳໃດ ໆ ລັກສະນະນັ້ນ ໆ ຮຽກວ່າຖານະ ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ໃນຖານະນັ້ນ ນີ້ຮຽກວ່າ ຄວາມເປັນຜູ້ສະຫຼາດໃນຖານະ

[໑໓໔໕] ຄວາມເປັນຜູ້ສະຫຼາດໃນອະຖານະ ເປັນແນວໃດ?

ທຳໃດ ໆ ບໍ່ເປັນເຫດ ບໍ່ເປັນປັດໄຈ ເພື່ອຄວາມເກີດຂຶ້ນແຫ່ງທຳໃດ ໆ ລັກສະນະນັ້ນ ໆ ຊື່ວ່າອະຖານະ ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ໃນອະຖານະນັ້ນ ນີ້ຮຽກວ່າຄວາມເປັນຜູ້ສະຫຼາດໃນອະຖານະ

## ໒໔. ອາດຊະວະທຸກະ

[໑໓໔໖] ຄວາມຊື່ຕົງ ເປັນແນວໃດ?

ຄວາມຊື່ຕົງ ຄວາມບໍ່ຄົດ ຄວາມບໍ່ງໍ ຄວາມບໍ່ໂກງ ນີ້ຮຽກວ່າຄວາມເປັນຜູ້ຊື່ຕົງ

[໑໓໔໗] ຄວາມອ່ອນໂຍນ ເປັນແນວໃດ?

ຄວາມອ່ອນໂຍນ ຄວາມລະມຸນລະໄມ ຄວາມບໍ່ແຂງ ຄວາມບໍ່ກະດ້າງ ຄວາມຈຽມໃຈ ນີ້ຮຽກວ່າ ຄວາມອ່ອນໂຍນ

## ໘໕. ຂັນຕິທຸກະ

[໑໓໔໘] ຂັນຕິ ເປັນແນວໃດ?

ຄວາມອົດທົນ ກິຣິຍາທີ່ອົດທົນ ຄວາມອົດກັ້ນ ຄວາມບໍ່ດຸຮ້າຍ ຄວາມບໍ່ຮຸນແຮງ ຄວາມແຊ່ມຊື່ນແຫ່ງຈິດ ນີ້ຮຽກວ່າ ຂັນຕິ

[໑໓໔໙] ໂສຣັດຈະ ເປັນແນວໃດ?

ຄວາມບໍ່ລ່ວງລະເມີດທາງກາຍ ຄວາມບໍ່ລ່ວງລະເມີດທາງວາຈາ ຄວາມບໍ່ລ່ວງລະເມີດທາງກາຍແລະທາງວາຈາ ນີ້ຮຽກວ່າໂສຣັດຈະ ແມ່ນຄວາມສັງລວມໃນສິນທັງໝົດກໍຊື່ວ່າ ໂສຣັດຈະ

## ໘໖. ສາຂັນລະຍະທຸກະ

[໑໓໕໐] ຄວາມມີວາຈາອ່ອນຫວານ ເປັນແນວໃດ?

ວາຈາໃດເປັນປົມ ເປັນກາກ ເຜັດຮ້ອນຕໍ່ຜູ້ອື່ນ ກ່ຽວຜູ້ອື່ນໄວ້ ຍົວຍຸໃຫ້ໂກດບໍ່ເປັນໄປເພື່ອສະມາທິ ລະວາຈາເຊັ່ນນັ້ນແລ້ວ ວາຈາໃດ ບໍ່ມີໂທດ ສະບາຍຫູ ມ່ວນຈັບໃຈ ເປັນວາຈາຂອງຊາວເມືອງ ເປັນທີ່ຈະເລີນໃຈຂອງຊົນທັງຫຼາຍ ກ່າວວາຈາເຊັ່ນນັ້ນ ຄວາມເປັນຜູ້ມີວາຈາ ອ່ອນຫວານ ຄວາມເປັນຜູ້ມີວາຈາສະຫຼະສະຫຼວຍ ຄວາມເປັນຜູ້ມີວາຈາບໍ່ຫຍາບຄາຍ ໃນລັກສະນະດັ່ງກ່າວມານັ້ນ ນີ້ຮຽກວ່າ ຄວາມມີວາຈາອ່ອນຫວານ

[໑໓໕໑] ການປະຕິສັນຖານ ເປັນແນວໃດ?

ປະຕິສັນຖານ ໒ ຄື ອາມິດປະຕິສັນຖານ ແລະທຳມະປະຕິສັນຖານ

ບຸກຄົນບາງຄົນໃນໂລກນີ້ເປັນຜູ້ມີປະຕິສັນຖານດ້ວຍອາມິດ ຫຼື ມີປະຕິສັນຖານດ້ວຍທຳ ນີ້ຮຽກວ່າປະຕິສັນຖານ

## ໘໗. ອິນທະຣິເຍສຸອະຄຸດຕະທະວາຣະຕາທຸກະ

[໑໓໕໒] ຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ ເຫັນຮູບດ້ວຍຕາແລ້ວລວບຖື ແຍກຖື ບໍ່ປະຕິບັດເພື່ອສັງລວມຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາແລະໂທມະນັດ

ຄອບງຳໄດ້ ບໍ່ຮັກສາຈັກຂຸນຊີ ບໍ່ເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງດ້ວຍຫູ ຯລຯ ດົມກິ່ນດ້ວຍດັງ ຯລຯ ຊີມຣົດດ້ວຍລີ້ນ ຯລຯ ຖືກຕ້ອງໂຜດຖັບພະດ້ວຍກາຍ ຯລຯ ຮູ້ທຳມາຣົມດ້ວຍໃຈແລ້ວ ຮວບຖື ແຍກຖືບໍ່ປະຕິບັດເພື່ອສັງລວມມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາ ແລະໂທມະນັດຄອບງຳໄດ້ ບໍ່ຮັກສາມະນິນຊີ ບໍ່ເຖິງຄວາມສັງລວມໃນມະນິນຊີ ຄວາມບໍ່ຄຸ້ມຄອງ ກິຣິຍາທີ່ບໍ່ຄຸ້ມຄອງ ຄວາມບໍ່ຮັກສາ ຄວາມບໍ່ສັງລວມ ນີ້ຮຽກວ່າຄວາມເປັນຜູ້ບໍ່ຄຸ້ມຄອງທະວານໃນອິນຊີທັງຫຼາຍ

[໑໓໕໓] ຄວາມເປັນຜູ້ບໍ່ຮູ້ຈັກປະມານໃນການບໍຣິໂພກ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ ບໍ່ພິຈາລະນາໂດຍແຍບຄາຍ ບໍຣິໂພກອາຫານເພື່ອຫຼິ້ນ ເພື່ອຄວາມມົວເມົາ ເພື່ອປະບຳລຸງຜິວ ເພື່ອຄວາມຕຸ້ຍພີ ຄວາມເປັນຜູ້ບໍ່ສັນໂດດ ຄວາມເປັນຜູ້ບໍ່ຮູ້ຈັກປະມານ ຄວາມບໍ່ພິຈາລະນາໃນການບໍຣິໂພກນັ້ນ ນີ້ຮຽກວ່າຄວາມເປັນຜູ້ ບໍ່ຮູ້ຈັກປະມານໃນການບໍຣິໂພກ

## ໔໗. ອິນທະຣິເຍສຸຄຸດຕະທະວາຣະຕາທຸກະ

[໑໓໕໔] ຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ ເຫັນຮູບດ້ວຍຕາແລ້ວບໍ່ລວບຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມໃນຈັກຂຸນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳຄືອະພິດຊາແລະໂທມະນັດຄອບງຳໄດ້ ຍ່ອມຮັກສາຈັກຂຸນຊີ ຍ່ອມເຖິງຄວາມສັງລວມໃນຈັກຂຸນຊີ ຟັງສຽງດ້ວຍຫູ ຯລຯ ດົມກິ່ນດ້ວຍດັງ ຯລຯ ຊີມຣົດດ້ວຍລີ້ນ ຯລຯ ຖືກຕ້ອງໂຜດຖັບພະດ້ວຍກາຍ ຯລຯ ຮູ້ທຳມາຣົມດ້ວຍໃຈແລ້ວ ບໍ່ລວບຖື ບໍ່ແຍກຖື ຍ່ອມປະຕິບັດເພື່ອສັງລວມໃນມະນິນຊີ ເຊິ່ງເມື່ອບໍ່ສັງລວມແລ້ວກໍຈະເປັນເຫດໃຫ້ບາບອະກຸສົນທຳຄື ອະພິດຊາແລະໂທມະນັດຄອບງຳໄດ້ ຍ່ອມຮັກສາມະນິນຊີ ຍ່ອມເຖິງຄວາມສັງລວມໃນມະນິນຊີ ຄວາມຄຸ້ມຄອງ ກິຣິຍາທີ່ຄຸ້ມຄອງ ຄວາມຮັກສາ ຄວາມສັງລວມ ນີ້ຮຽກວ່າ ຄວາມເປັນຜູ້ຄຸ້ມຄອງທະວານໃນອິນຊີທັງຫຼາຍ

[໑໓໕໕] ຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ ເປັນແນວໃດ?

ພິກຂຸບາງອົງໃນທຳວິໄນນີ້ ພິຈາລະນາໂດຍແຍບຄາຍວ່າ ເຮົາບໍຣິໂພກອາຫານບໍ່ແມ່ນເພື່ອຫຼິ້ນ ບໍ່ແມ່ນເພື່ອຄວາມມົວເມົາ ບໍ່ແມ່ນເພື່ອປະບຳລຸງຜິວ ບໍ່ແມ່ນເພື່ອໃຫ້ຕຸ້ຍພີ ແຕ່ເພື່ອກາຍນີ້ດຳຣົງຢູ່ໄດ້ ເພື່ອໃຫ້ຊີວິຕິນຊີເປັນໄປ ເພື່ອບຳບັດຄວາມຫິວ ເພື່ອອະນຸເຄາະພົມມະຈັນໂດຍອຸບາຍນີ້ ເຮົາຈັກກຳຈັດເວທະນາເກົ່າໄປໄດ້ ແລະຈັກບໍ່ໃຫ້ເວທະນາໃໝ່ເກີດຂຶ້ນ ຄວາມດຳຣົງຢູ່ແຫ່ງຊີວິດ ຄວາມບໍ່ມີໂທດແລະການຢູ່ໂດຍຜາສຸກຈັກມີແກ່ເຮົາດັ່ງນີ້ ແລ້ວຈຶ່ງບໍຣິໂພກອາຫານ ຄວາມສັນໂດດ ຄວາມຮູ້ຈັກປະມານ ການພິຈາລະນາໃນໂພຊະນາຫານນັ້ນ ນີ້ຮຽກວ່າຄວາມເປັນຜູ້ຮູ້ຈັກປະມານໃນການບໍຣິໂພກ

## ໔໙. ມຸດຖະສັດຈະທຸກະ

[໑໓໕໖] ຄວາມເປັນຜູ້ມີສະຕິຫຼົງລືມ ເປັນແນວໃດ?

ຄວາມຣະລຶກບໍ່ໄດ້ ຄວາມບໍ່ຕາມຣະລຶກ ຄວາມບໍ່ທວນຣະລຶກ ຄວາມຣະລຶກບໍ່ໄດ້ ອາການທີ່ຣະລຶກບໍ່ໄດ້ ຄວາມຊົງຈຳບໍ່ໄດ້ ຄວາມເລື່ອນລອຍ ຄວາມຫຼົງລືມ ນີ້ຮຽກວ່າຄວາມເປັນຜູ້ມີສະຕິຫຼົງລືມ

[໑໓໕໗] ຄວາມເປັນຜູ້ບໍ່ມີສຳປະຊັນຍະ ເປັນແນວໃດ?

ຄວາມບໍ່ຮູ້ ຄວາມບໍ່ເຫັນ ຯລຯ ຫຼື້ມຄື ອະວິດຊາ ອະກຸສົນມູນຄືໂມຫະ ນີ້ຮຽກວ່າຄວາມເປັນຜູ້ບໍ່ມີສຳປະຊັນຍະ

## ໓໐. ສະຕິສຳປະຊັນຍະທຸກະ

[໑໓໕໘] ສະຕິ ເປັນແນວໃດ?

ສະຕິ ຄວາມຕາມຣະລຶກ ຄວາມທວນຣະລຶກ ສະຕິ ກິຣິຍາທີ່ຣະລຶກ ຄວາມຊົງຈຳ ຄວາມບໍ່ເລື່ອນລອຍ ຄວາມບໍ່ຫຼົງລືມ ສະຕິ ສະຕິນຊີ ສະຕິພະລະ ສຳມາສະຕິ ນີ້ຮຽກວ່າສະຕິ

[໑໓໕໙] ສຳປະຊັນຍະ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ນີ້ຮຽກວ່າ ສຳປະຊັນຍະ

## ໓໑. ປະຕິສັງຂານະພະລະທຸກະ

[໑໓໖໐] ກຳລັງຄືການພິຈາລະນາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ນີ້ຮຽກວ່າກຳລັງຄືການພິຈາລະນາ

[໑໓໖໑] ກຳລັງຄືພາວະນາ ເປັນແນວໃດ?

ການເສບ ການຈະເລີນ ການເຮັດໃຫ້ຫຼາຍ ເຊິ່ງກຸສົນທຳ ນີ້ຮຽກວ່າ ກຳລັງຄືພາວະນາ ແມ່ນໂພດຊົງ ກ ກໍຮຽກວ່າກຳລັງຄືພາວະນາ

## ໓໔. ສະມະຖະວິປັດສະນາທຸກະ

[໑໓໖໔] ສະມະຖະ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ຯລຯ ສຳມາສະມາທິ ນີ້ຮຽກວ່າ ສະມະຖະ

[໑໓໓໓] ວິປັດສະນາ ເປັນແນວໃດ?

ປັນຍາ ກິຣິຍາທີ່ຮູ້ແຈ້ງ ฯลฯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ນີ້ຮຽກວ່າວິປັດສະນາ

## ໓໓. ສະມະຖະນິມິດຕະທຸກະ

[໑໓໓໔] ນິມິດແຫ່ງສະມະຖະ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ฯลฯ ສຳມາສະມາທິ ນີ້ຮຽກວ່າ ນິມິດຂອງສະມະຖະ

[໑໓໓໕] ນິມິດແຫ່ງຄວາມພຽນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ฯลฯ ສຳມາວາຍາມະ ນີ້ຮຽກວ່ານິມິດແຫ່ງຄວາມພຽນ

## ໓໔. ປັກຄາຫະທຸກະ

[໑໓໓໖] ຄວາມພຽນ ເປັນແນວໃດ?

ການຜາຣົບຄວາມພຽນທາງໃຈ ฯลฯ ສຳມາວາຍາມະ ນີ້ຮຽກວ່າຄວາມພຽນ

[໑໓໓໗] ຄວາມບໍ່ຟຸ້ງຊ່ານ ເປັນແນວໃດ?

ຄວາມຕັ້ງຢູ່ແຫ່ງຈິດ ฯลฯ ສຳມາສະມາທິ ນີ້ຮຽກວ່າ ຄວາມບໍ່ຟຸ້ງຊ່ານ

## ໓໕. ສີລະວິປັດຕິທຸກະ

[໑໓໓໘] ຄວາມວິບັດແຫ່ງສີນ ເປັນແນວໃດ?

ການລ່ວງລະເມີດທາງກາຍ ການລ່ວງລະເມີດທາງວາຈາ ການລ່ວງລະເມີດທາງກາຍແລະທາງວາຈາ ນີ້ຮຽກວ່າ ຄວາມວິບັດແຫ່ງສີນ ຄວາມເປັນຜູ້ທຸສີນແມ່ນທັງໝົດກໍຊື່ວ່າຄວາມວິບັດແຫ່ງສີນ

[໑໓໓໙] ຄວາມວິບັດແຫ່ງທິດຖິ ເປັນແນວໃດ?

ຄວາມເຫັນວ່າ ທານທີ່ໃຫ້ແລ້ວບໍ່ມີຜົນ ຍັນທີ່ບູຊາແລ້ວບໍ່ມີຜົນ ການບວງສວງບໍ່ມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີເຮັດຊົ່ວກໍບໍ່ມີ ບໍ່ມີໂລກນີ້ ບໍ່ມີໂລກໜ້າ ມານດາບໍ່ມີຄຸນ ບິດາບໍ່ມີຄຸນ ສັດທີ່ເກີດຜຸດຂຶ້ນບໍ່ມີ ສະມະນະພາມຜູ້ປະພຶດປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງກໍບໍ່ມີໃນໂລກ ດັ່ງນີ້ ທິດຖິ ຄວາມເຫັນຜິດ ฯลฯ ຄວາມຢຶດຖືໂດຍວິປະລາດ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າຄວາມວິບັດແຫ່ງທິດຖິ ມິດສາທິດຖິທັງໝົດກໍຊື່ວ່າຄວາມວິບັດແຫ່ງທິດຖິ

## ๓๒. ສີລະສຳປະທາທຸກະ

[໑໓໗໐] ຄວາມສົມບູນແຫ່ງສີນ ເປັນແນວໃດ?

ຄວາມບໍ່ລ່ວງລະເມີດທາງກາຍ ຄວາມບໍ່ລ່ວງລະເມີດທາງວາຈາ ຄວາມບໍ່ລ່ວງລະເມີດທາງກາຍແລະທາງວາຈາ ນີ້ຮຽກວ່າຄວາມສົມບູນແຫ່ງສີນ ສີນສັງວອນແມ່ນທັງໝົດກໍຮຽກວ່າຄວາມສົມບູນແຫ່ງສີນ

[໑໓໗໑] ຄວາມສົມບູນແຫ່ງທິດຖິ ເປັນແນວໃດ?

ຄວາມເຫັນວ່າ ທານທີ່ໃຫ້ແລ້ວມີຜົນ ຍັນທີ່ບູຊາແລ້ວມີຜົນ ການບວງສວງມີຜົນ ຜົນວິບາກແຫ່ງກຳທີ່ເຮັດດີເຮັດຊົ່ວມີ ໂລກນີ້ມີ ໂລກໜ້າມີ ມານດາມີຄຸນ ບິດາມີຄຸນ ສັດທີ່ເກີດຜຸດຂຶ້ນກໍມີ ສະມະນະພາມຜູ້ປະພຶດປະຕິບັດຊອບເຮັດໃຫ້ແຈ້ງໂລກນີ້ແລະໂລກໜ້າດ້ວຍປັນຍາອັນຍິ່ງເອງແລ້ວສອນຜູ້ອື່ນໃຫ້ຮູ້ແຈ້ງມີຢູ່ໃນໂລກ ດັ່ງນີ້ ປັນຍາກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງງົມງວາຍ ຄວາມໄຈ້ແຍກທຳ ສຳມາທິດຖິ ມີລັກສະນະເຊັ່ນວ່ານີ້ ນີ້ຮຽກວ່າຄວາມສົມບູນແຫ່ງທິດຖິ ສຳມາທິດຖິແມ່ນທັງໝົດກໍຮຽກວ່າຄວາມສົມບູນແຫ່ງທິດຖິ

## ๓๓. ສີລະວິສຸດທິທຸກະ

[໑໓໗໔] ຄວາມບໍລິສຸດແຫ່ງສີນ ເປັນແນວໃດ?

ຄວາມບໍ່ລ່ວງລະເມີດທາງກາຍ ຄວາມບໍ່ລ່ວງລະເມີດທາງວາຈາ ຄວາມບໍ່ລ່ວງລະເມີດທາງກາຍແລະທາງວາຈາ ນີ້ຮຽກວ່າຄວາມບໍລິສຸດແຫ່ງສີນ ສີນສັງວອນແມ່ນທັງໝົດກໍຮຽກວ່າຄວາມບໍລິສຸດແຫ່ງສີນ

[໑໓໗໓] ຄວາມບໍລິສຸດແຫ່ງທິດຖິ ເປັນແນວໃດ?

ຍານເປັນເຄື່ອງຮູ້ວ່າສັດມີກຳເປັນຂອງຕົນ ຍານທີ່ສົມຄວນແກ່ການຢັ່ງຮູ້ອະຣິຍະສັດ ຍານຂອງທ່ານຜູ້ພ້ຽບພ້ອມດ້ວຍມັກ ຍານຂອງທ່ານຜູ້ພ້ຽບພ້ອມດ້ວຍຜົນ

## ๓๔. ທິດຖິວິສຸດທິໂຂປະນະທຸກະ

[໑໓໗໔] ທີ່ຊື່ວ່າ ຄວາມບໍລິສຸດແຫ່ງທິດຖິ ໄດ້ແກ່ ປັນຍາ ກິຣິຍາທີ່ຮູ້ແຈ້ງ ຯລຯ ຄວາມບໍ່ຫຼົງ ຄວາມໄຈ້ແຍກທຳ ສຳມາທິດຖິ

[໑໓໗໕] ທີ່ຊື່ວ່າ ຄວາມພຽນຂອງບຸກຄົນຜູ້ມີຄວາມເຫັນບໍລິສຸດ ໄດ້ແກ່ ການຜາຣົບຄວາມພຽນທາງໃຈ ຯລຯ ສຳມາວາຍາມະ

## ๓๙. ສັງເວຊະນີຍັດຖານະທຸກະ

[໑໓໗໖] ທີ່ຊື່ວ່າ ຄວາມສະລົດໃຈ ໄດ້ແກ່ ຍານທີ່ເຫັນຊາດໂດຍຄວາມເປັນໄພ ຍານທີ່ເຫັນຊະຣາໂດຍຄວາມເປັນໄພ ຍານທີ່ເຫັນພະຍາທິໂດຍຄວາມເປັນໄພ ຍານທີ່ເຫັນມໍລະນະໂດຍຄວາມເປັນໄພ ຊື່ວ່າຖານະເປັນບ່ອນຕັ້ງແຫ່ງຄວາມສະລົດໃຈ ໄດ້ແກ່ ຊາດ ຊະຣາ ພະຍາທິ ແລະມໍລະນະ

[໑໓໗໗] ທີ່ຊື່ວ່າ ຄວາມພຽນໂດຍແຍບຄາຍຂອງບຸກຄົນຜູ້ສະລົດໃຈ ໄດ້ແກ່ ພິກຂຸ ໃນທຳວິໄນນີ້ ຍັງສັນທະໃຫ້ເກີດ ພະຍາຍາມ ຜາຣົບຄວາມພຽນ ປະຄອງຈິດ ຕັ້ງຈິດໄວ້ ເພື່ອເຮັດບາບອະກຸສົນທຳອັນຍັງບໍ່ເກີດບໍ່ໃຫ້ເກີດ ເພື່ອລະບາບອະກຸສົນທຳອັນເກີດແລ້ວ ເພື່ອເຮັດກຸສົນທຳອັນຍັງບໍ່ເກີດໃຫ້ເກີດ ເພື່ອຄວາມຕັ້ງໝັ້ນ ບໍ່ເລີເລືອນ ພິນໂຍພາບ ໄພບູນ ຈະເລີນເຕັມທີ່ແຫ່ງກຸສົນທຳອັນເກີດແລ້ວ

## ໔໐. ອະສັນຕຸດຖິຕາກຸສະລະທຳມະທຸກະ

[໑໓໗໘] ທີ່ຊື່ວ່າ ຄວາມບໍ່ສັນໂດດໃນກຸສົນທຳ ໄດ້ແກ່ ຄວາມພໍໃຈຍິ່ງ ໆ ຂຶ້ນໄປຂອງບຸກຄົນຜູ້ບໍ່ສັນໂດດໃນການຈະເລີນກຸສົນທຳ

[໑໓໗໙] ທີ່ຊື່ວ່າ ຄວາມເປັນຜູ້ບໍ່ທໍ້ຖອຍໃນຄວາມພຽນ ໄດ້ແກ່ ຄວາມເປັນຜູ້ເຮັດໂດຍເຄົາຣົບ ຄວາມເປັນຜູ້ເຮັດຕິດຕໍ່ ຄວາມເປັນຜູ້ເຮັດບໍ່ຢຸດ ຄວາມເປັນຜູ້ປະພຶດບໍ່ຫຍ່ອນຍານ ຄວາມເປັນຜູ້ບໍ່ຖິ້ມສັນທະ ຄວາມເປັນຜູ້ບໍ່ຖືເບົາ ຄວາມເສບ ຄວາມຈະເລີນ ການກະທຳໃຫ້ຫຼາຍ ເພື່ອຄວາມຈະເລີນແຫ່ງກຸສົນທຳ

## ໔໑. ວິດຊາທຸກະ

[໑໓໘໐] ທີ່ຊື່ວ່າ ວິດຊາ ໄດ້ແກ່ ວິດຊາ ໓ ຄື

໑. ວິດຊາຄື ປຸບເພນິວາສານຸສະຕິຍານ
໒. ວິດຊາຄື ຈຸຕູປະປາຕະຍານ
໓. ວິດຊາຄື ອາສະວັກຂະຍະຍານ

[໑໓໘໑] ທີ່ຊື່ວ່າ ວິມຸດຕິ ໄດ້ແກ່ ວິມຸດຕິ ໒ ຄື ອະທິມຸດຕິແຫ່ງຈິດ (ສະມາບັດ ໘) ແລະນິບພານ

## ໔໒. ຂະເຍຍານະທຸກະ

[໑໓໘໒] ທີ່ຊື່ວ່າ ຄວາມຮູ້ໃນອະຣິຍະມັກ ໄດ້ແກ່ ຄວາມຮູ້ຂອງທ່ານຜູ້ພຽບພ້ອມດ້ວຍມັກຄະຈິດ

[໑໓໘໓] ທີ່ຊື່ວ່າ ຄວາມຮູ້ໃນອະຣິຍະຜົນ ໄດ້ແກ່ ຄວາມຮູ້ຂອງທ່ານຜູ້ພຽບພ້ອມດ້ວຍຜົນລະຈິດ

**ສູດຕັນຕິກະທຸກະນິກະເຂປະ ຈົບ**

**ນິກເຂປະກັນ ຈົບ**

# ໔. ອັດຖະກະຖາກັນ

## ຕິກະອັດຖຸດທາຣະ

### ໑. ກຸສະລະຕິກະ

[໑໓໘໔] ສະພາວະທຳທີ່ເປັນກຸສົນ ເປັນແນວໃດ?

ສະພາວະທຳທີ່ເປັນກຸສົນໃນພູມ ໔ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນກຸສົນ

[໑໓໘໕] ສະພາວະທຳທີ່ເປັນອະກຸສົນ ເປັນແນວໃດ?

ຈິດຕຸບບາດທີ່ເປັນອະກຸສົນ ໑໔ ສະພາວະທຳເຫຼົ່ານີ້ຊື່ວ່າເປັນອະກຸສົນ

[໑໓໘໖] ສະພາວະທຳທີ່ເປັນອັບພະຍາກະຕະ ເປັນແນວໃດ?

ວິບາກໃນພູມ ໔ ອັບພະຍາກະຕະກິຣິຍາໃນພູມ ໓ ຮູບ ແລະນິບພານ ສະພາວະທຳເຫຼົ່ານີ້ ຊື່ວ່າ ເປັນອັບພະຍາກະຕະ

### ໔. ເວທະນາຕິກະ

[໑໓໘໗] ສະພາວະທຳທີ່ສຳປະຍຸດດ້ວຍສຸກຂະເວທະນາ ເປັນແນວໃດ?

ຈິດຕຸບບາດທີ່ປະກອບດ້ວຍໂສມະນັດຝ່າຍກາມາວະຈອນກຸສົນ ໔ ຝ່າຍອະກຸສົນ ໔ ຝ່າຍວິບາກ ແຫ່ງກາມາວະຈອນກຸສົນ ໕ ແລະຝ່າຍກິຣິຍາຢ່າງລະ ໕ ດວງ ຊານ ໓ ແລະຊານ ໔ ທີ່ເປັນຮູບປາວະຈອນຝ່າຍກຸສົນ ວິບາກ ແລະກິຣິຍາ ຊານ ໓ ແລະຊານ ໔ ທີ່ເປັນໂລກຸດຕະຣະຝ່າຍກຸສົນ ແລະວິບາກ ເວັ້ນສຸກຂະເວທະນາທີ່ເກີດຂຶ້ນໃນຈິດຕຸບບາດນີ້ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍສຸກຂະເວທະນາ

[໑໓໘໘] ສະພາວະທຳທີ່ສຳປະຍຸດດ້ວຍທຸກຂະເວທະນາ ເປັນແນວໃດ?

ຈິດຕຸບບາດທີ່ປະກອບດ້ວຍໂທມະນັດ ໔ ແລະກາຍວິນຍານທີ່ປະກອບດ້ວຍທຸກ ເວັ້ນທຸກຂະເວທະນາທີ່ເກີດຂຶ້ນໃນຈິດເຫຼົ່ານີ້ແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າສຳປະຍຸດດ້ວຍທຸກຂະເວທະນາ

[໑໓໗໙] ສະພາວະທຳທີ່ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ ເປັນແນວໃດ?

ຈິດຕຸບບາດທີ່ປະກອບດ້ວຍອຸເປກຂາຝ່າຍກາມາວະຈອນກຸສົນ ໔ ຝ່າຍອະກຸສົນ ໖ ຝ່າຍວິບາກແຫ່ງກາມາວະຈອນກຸສົນ ໑໐ ຝ່າຍວິບາກແຫ່ງອະກຸສົນ ໖ ຝ່າຍກິຣິຍາ ໖ ຮູບປາວະຈອນຈະຕຸດຖະຊານຝ່າຍກຸສົນ ວິບາກ ແລະກິຣິຍາ ອະຮູບປາວະຈອນ ໔ ຝ່າຍກຸສົນ ວິບາກ ແລະກິຣິຍາ ໂລກຸດຕະຣະຈະຕຸດຖະຊານຝ່າຍກຸສົນແລະວິບາກ ເວັ້ນອະທຸກຂະມະສຸຂະເວທະນາທີ່ເກີດຂຶ້ນໃນຈິດນີ້ແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ

ເວທະນາ ໓ ຮູບ ແລະນິບພານ ສະພາວະທຳເຫຼົ່ານີ້ກ່າວບໍ່ໄດ້ວ່າ ສຳປະຍຸດດ້ວຍສຸກຂະເວທະນາ ສຳປະຍຸດດ້ວຍທຸກຂະເວທະນາ ຫຼື ສຳປະຍຸດດ້ວຍອະທຸກຂະມະສຸຂະເວທະນາ

## ໓. ວິປາກະຕິກະ

[໑໓໘໐] ສະພາວະທຳທີ່ເປັນວິບາກ ເປັນແນວໃດ?

ວິບາກໃນພູມ ໔ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນວິບາກ

[໑໓໘໑] ສະພາວະທຳທີ່ເປັນເຫດໃຫ້ເກີດວິບາກ ເປັນແນວໃດ?

ກຸສົນໃນພູມ ໔ ແລະອະກຸສົນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນເຫດໃຫ້ເກີດວິບາກ

[໑໓໘໒] ສະພາວະທຳທີ່ບໍ່ເປັນວິບາກແລະບໍ່ເປັນເຫດໃຫ້ເກີດວິບາກ ເປັນແນວໃດ?

ອັບພະຍາກະຕະກິຣິຍາໃນພູມ ໓ ຮູບ ແລະນິບພານ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ເປັນວິບາກ ແລະບໍ່ເປັນເຫດໃຫ້ເກີດວິບາກ

## ໔. ອຸປາທິນນະຕິກະ

[໑໓໘໓] ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານ ເປັນແນວໃດ?

ວິບາກໃນພູມ ໓ ແລະຮູບອັນກຳປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ກຳອັນປະກອບດ້ວຍຕັນຫາທິດຖິຍຶດຖື ແລະເປັນອາລົມຂອງອຸປາທານ

[໑໓໘໔] ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ ເປັນແນວໃດ?

ກຸສົນໃນພູມ ໓ ອະກຸສົນ ອັບພະຍາກະຕະກິຣິຍາໃນພູມ ໓ ແລະຮູບອັນກຳບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າ ກຳອັນປະກອບດ້ວຍຕັນຫາ ແລະທິດຖິບໍ່ຍຶດຖືແຕ່ເປັນອາລົມຂອງອຸປາທານ

[໑໓໙໕] ສະພາວະທຳທີ່ກຳອັນປະກອບດ້ວຍຕັນຫາທິດຖິບໍ່ຢຶດຖື ແລະບໍ່ເປັນອາລົມຂອງອຸປາທານ ເປັນແນວໃດ?

ມັກ ໔ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສາມັນຍະຜົນ ໔ ແລະນິບພານ ສະພາວະທຳເຫຼົ່ານີ້ຊື່ວ່າ ກຳອັນປະກອບດ້ວຍຕັນຫາທິດຖິບໍ່ຢຶດຖື ແລະບໍ່ເປັນອາລົມຂອງອຸປາທານ

## ໕. ສັງກິລິດຖະຕິກະ

[໑໓໙໖] ສະພາວະທຳທີ່ກິເລດເຮັດໃຫ້ເສົ້າໝອງ ແລະເປັນອາລົມຂອງກິເລດເປັນແນວໃດ?

ອະກຸສົນຈິດຕຸບບາດ ໑໒ ສະພາວະທຳເຫຼົ່ານີ້ຊື່ວ່າ ກິເລດເຮັດໃຫ້ເສົ້າໝອງແລະເປັນອາລົມຂອງກິເລດ

[໑໓໙໗] ສະພາວະທຳທີ່ກິເລດບໍ່ເຮັດໃຫ້ເສົ້າໝອງ ແຕ່ເປັນອາລົມຂອງກິເລດເປັນແນວໃດ?

ກຸສົນໃນພູມ ໓ ວິບາກໃນພູມ ໓ ອັບພະຍາກະຕະກິຣິຍາໃນພູມ ໓ ແລະຮູບທັງໝົດ ສະພາວະທຳເຫຼົ່ານີ້ຊື່ວ່າ ກິເລດບໍ່ເຮັດໃຫ້ເສົ້າໝອງແຕ່ເປັນອາລົມຂອງກິເລດ

[໑໓໙໘] ສະພາວະທຳທີ່ກິເລດບໍ່ເຮັດໃຫ້ເສົ້າໝອງ ແລະບໍ່ເປັນອາລົມຂອງກິເລດ ເປັນແນວໃດ?

ມັກ ໔ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສາມັນຍະຜົນ ໔ ແລະນິບພານ ສະພາວະທຳເຫຼົ່ານີ້ຊື່ວ່າ ກິເລດບໍ່ເຮັດໃຫ້ເສົ້າໝອງ ແລະບໍ່ເປັນອາລົມຂອງກິເລດ

## ໖. ສະວິຕັກກະຕິກະ

[໑໓໙໙] ສະພາວະທຳທີ່ມີທັງວິຕົກແລະວິຈານ ເປັນແນວໃດ?

ກາມາວະຈອນກຸສົນ ອະກຸສົນ ຈິດຕຸບບາດຝ່າຍວິບາກແຫ່ງກາມາວະຈອນກຸສົນ ໑໑ ຝ່າຍວິບາກແຫ່ງອະກຸສົນ ໘ ຝ່າຍກິຣິຍາ ໑໑ ຮູບປາວະຈອນປະຖົມຊານຝ່າຍກຸສົນວິບາກ ແລະກິຣິຍາ ໂລກຸດຕະຣະປະຖົມຊານຝ່າຍກຸສົນແລະວິບາກ ເວັ້ນວິຕົກແລະວິຈານທີ່ເກີດຂຶ້ນໃນຈິດເຫຼົ່ານີ້ແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ມີທັງວິຕົກແລະວິຈານ

[໑໔໐໐] ສະພາວະທຳທີ່ບໍ່ມີວິຕົກມີພຽງວິຈານ ເປັນແນວໃດ?

ທຸຕິຍະຊານໃນຮູບປາວະຈອນ ປັນຈະກະໄນຝ່າຍກຸສົນ ວິບາກ ແລະກິຣິຍາ ທຸຕິຍະຊານໃນ ໂລກຸດຕະຣະປັນຈະກະໄນ ຝ່າຍກຸສົນ ແລະວິບາກ ແລະວິຕົກ ເວັ້ນວິຈານທີ່ເກີດຂຶ້ນໃນຈິດເຫຼົ່ານີ້ແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ມີວິຕົກມີພຽງວິຈານ

[໑໔໐໑] ສະພາວະທຳທີ່ບໍ່ມີທັງວິຕົກແລະວິຈານ ເປັນແນວໃດ?

ທະວິປັນຈະວິນຍານທັງໝົດ ຊານ ໓ ແລະຊານ ໔ ທີ່ເປັນຮູບປາວະຈອນຝ່າຍກຸສົນ ວິບາກ ແລະກິຣິຍາ ອະຮູບ ໔ ຝ່າຍກຸສົນ ວິບາກແຫ່ງກິຣິຍາ ຊານ ໓ ແລະຊານ ໔ ຝ່າຍທີ່ເປັນໂລກຸດຕະຣະຝ່າຍກຸສົນ ວິບາກ ວິຈານທີ່ເກີດຂຶ້ນໃນທຸຕິຍະຊານ ໃນປັນຈະກະໄນ ຮູບ ແລະນິບພານ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ມີທັງວິຕົກແລະວິຈານ ວິຈານທີ່ເກີດພ້ອມກັບວິຕົກກ່າວບໍ່ໄດ້ວ່າມີທັງວິຕົກແລະວິຈານ ບໍ່ມີວິຕົກມີພຽງວິຈານ ຫຼື ບໍ່ມີທັງວິຕົກແລະວິຈານ

## ກ. ປີຕິຕິກະ

[໑໔໐໒] ສະພາວະທຳທີ່ປະກອບດ້ວຍປີຕິ ເປັນແນວໃດ?

ຈິດຕຸບບາດທີ່ປະກອບດ້ວຍໂສມະນັດຝ່າຍກາມາວະຈອນກຸສົນ ໔ ຝ່າຍອະກຸສົນ ໔ ຝ່າຍວິບາກແຫ່ງກາມາວະຈອນກຸສົນ ໕ ຝ່າຍກິຣິຍາ ໕ ທຸຕິຍະຊານ ໒ ແລະຊານ ໓ ທີ່ເປັນຮູບປາວະຈອນຝ່າຍກຸສົນ ວິບາກ ແລະກິຣິຍາ ຊານ ໒ ແລະຊານ ໓ ທີ່ເປັນໂລກຸດຕະຣະຝ່າຍກຸສົນ ແລະວິບາກ ເວັ້ນປີຕິທີ່ເກີດຂຶ້ນໃນຈິດເຫຼົ່ານັ້ນແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າປະກອບດ້ວຍປີຕິ

[໑໔໐໓] ສະພາວະທຳທີ່ປະກອບດ້ວຍສຸກ ເປັນແນວໃດ?

ຈິດຕຸບບາດທີ່ປະກອບດ້ວຍໂສມະນັດຝ່າຍກາມາວະຈອນກຸສົນ ໔ ຝ່າຍອະກຸສົນ ໔ ຝ່າຍວິບາກແຫ່ງກາມາວະຈອນກຸສົນ ໖ ຝ່າຍກິຣິຍາ ໕ ຊານ ໓ ແລະຊານ ໔ ທີ່ເປັນຮູບປາວະຈອນຝ່າຍ ກຸສົນ ວິບາກ ແລະກິຣິຍາ ຊານ ໓ ແລະຊານ ໔ ທີ່ເປັນໂລກຸດຕະຣະກຸສົນແລະວິບາກ ເວັ້ນສຸກ ທີ່ເກີດຂຶ້ນໃນຈິດເຫຼົ່ານີ້ແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າປະກອບດ້ວຍສຸກ

[໑໔໐໔] ສະພາວະທຳທີ່ປະກອບດ້ວຍອຸເປກຂາ ເປັນແນວໃດ?

ຈິດຕຸບບາດທີ່ປະກອບດ້ວຍອຸເປກຂາ ຝ່າຍກາມາວະຈອນກຸສົນ ໔ ຝ່າຍອະກຸສົນ ໖ ຝ່າຍວິບາກແຫ່ງກາມາວະຈອນກຸສົນ ໑໐ ຝ່າຍວິບາກແຫ່ງອະກຸສົນ ໖ ຝ່າຍກິຣິຍາ ໖ ຮູບປາວະຈອນຈະຕຸດຖະຊານ ຝ່າຍກຸສົນ ວິບາກ ແລະກິຣິຍາ ອະຮູບ ໔ ຝ່າຍກຸສົນ ວິບາກ ແລະກິຣິຍາ ໂລກຸດຕະຣະຈະຕຸດຖະຊານຝ່າຍກຸສົນແລະວິບາກ ເວັ້ນອຸເປກຂາທີ່ເກີດຂຶ້ນໃນຈິດເຫຼົ່ານີ້ແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າ ປະກອບດ້ວຍອຸເປກຂາ ປີຕິບໍ່ປະກອບດ້ວຍປີຕິ ແຕ່ປະກອບດ້ວຍສຸກ ບໍ່ປະກອບດ້ວຍອຸເປກຂາ ສຸກບໍ່ປະກອບດ້ວຍສຸກ ແຕ່ທີ່ປະກອບດ້ວຍປີຕິ ບໍ່ປະກອບດ້ວຍອຸເປກຂາກໍມີ ທີ່ກ່າວບໍ່ໄດ້ວ່າ ເກີດພ້ອມດ້ວຍປີຕິກໍມີ ຈິດຕຸບບາດທີ່ປະກອບດ້ວຍໂທມະນັດ ໒ ກາຍວິນຍານທີ່ປະກອບດ້ວຍທຸກ ອຸເປກຂາເວທະນາ ຮູບ ແລະນິບພານ ສະພາວະທຳເຫຼົ່ານີ້ກ່າວບໍ່ໄດ້ວ່າປະກອບດ້ວຍປີຕິ ເກີດພ້ອມດ້ວຍສຸກ ຫຼື ເກີດພ້ອມດ້ວຍອຸເປກຂາ

## ໗. ທັດສະນະຕິກະ

[໑໔໐໕] ສະພາວະທຳທີ່ຕ້ອງປະຫານດ້ວຍໂສດາປັດຕິມັກ ເປັນແນວໃດ?

ຈິດຕຸບບາດທີ່ປະກອບດ້ວຍທິດຖິ ໔ ດວງ ຈິດຕຸບບາດທີ່ປະກອບດ້ວຍວິຈິກິດສາ ສະພາວະທຳເຫຼົ່ານີ້ຊື່ວ່າ ຕ້ອງປະຫານດ້ວຍໂສດາປັດຕິມັກ

[໑໔໐໖] ສະພາວະທຳທີ່ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນແນວໃດ?

ຈິດຕຸບບາດທີ່ປະກອບດ້ວຍອຸດທັດຈະ ສະພາວະທຳເຫຼົ່ານີ້ຊື່ວ່າຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຈິດຕຸບບາດທີ່ປະກອບດ້ວຍໂລພະວິບປະຍຸດຈາກທິດຖິ ໔ ຈິດຕຸບບາດທີ່ປະກອບດ້ວຍໂທມະນັດ ໒ ສະພາວະທຳເຫຼົ່ານີ້ຊື່ວ່າ ຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ

[໑໔໐໗] ສະພາວະທຳທີ່ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນແນວໃດ?

ກຸສົນໃນພູມ ໔ ວິບາກໃນພູມ ໔ ອັບພະຍາກະຕະກິຣິຍາໃນພູມ ໓ ຮູບ ແລະ ນິບພານ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

## ໘. ທັດສະນະເຫດຕິກະ

[໑໔໐໘] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ ເປັນແນວໃດ?

ຈິດຕຸບບາດທີ່ສຳປະຍຸດດ້ວຍທິດຖິ ໔ ດວງ ຈິດຕຸບບາດທີ່ປະກອບດ້ວຍວິຈິກິດສາ ເວັ້ນໂມຫະທີ່ເກີດໃນຈິດຕຸບບາດນີ້ແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກ

[໑໔໐໙] ສະພາວະທຳທີ່ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ເປັນແນວໃດ?

ຈິດຕຸບບາດທີ່ປະກອບດ້ວຍອຸດທັດຈະ ເວັ້ນໂມຫະທີ່ເກີດຂຶ້ນໃນຈິດຕຸບບາດນີ້ແລ້ວ ສະພາວະທຳເຫຼົ່ານີ້ຊື່ວ່າມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ຈິດຕຸບບາດທີ່ປະກອບດ້ວຍໂລພະວິບປະຍຸດຈາກທິດຖິ ໔ ຈິດຕຸບບາດທີ່ປະກອບດ້ວຍໂທມະນັດ ໒ ສະພາວະທຳເຫຼົ່ານີ້ຊື່ວ່າມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກກໍມີ ມີເຫດຕ້ອງປະຫານດ້ວຍມັກເບື້ອງເທິງ ໓ ກໍມີ

[໑໔໑໐] ສະພາວະທຳທີ່ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓ ເປັນແນວໃດ?

ໂມຫະທີ່ປະກອບດ້ວຍວິຈິກິດສາ ໂມຫະທີ່ປະກອບດ້ວຍອຸດທັດຈະ ກຸສົນໃນພູມ ໔ ວິບາກໃນພູມ ໔ ອັບພະຍາກະຕະກິຣິຍາໃນພູມ ໓ ຮູບ ແລະນິບພານ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ມີເຫດຕ້ອງປະຫານດ້ວຍໂສດາປັດຕິມັກແລະມັກເບື້ອງເທິງ ໓

## ໑໐. ອາຈະຍະຄາມິຕິກະ

[໑໔໑໑] ສະພາວະທຳທີ່ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິ ເປັນແນວໃດ?

ກຸສົນໃນພູມ ໓ ແລະອະກຸສົນ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນເຫດໃຫ້ເຖິງປະຕິສົນທິແລະຈຸຕິ

[໑໔໑໒] ສະພາວະທຳທີ່ເປັນເຫດໃຫ້ເຖິງນິບພານ ເປັນແນວໃດ?

ມັກ ໔ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນເຫດໃຫ້ເຖິງ ນິບພານ

[໑໔໑໓] ສະພາວະທຳທີ່ບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານ ເປັນແນວໃດ?

ວິບາກໃນພູມ ໔ ອັບພະຍາກະຕະກິຣິຍາໃນພູມ ໓ ຮູບ ແລະນິບພານ ສະພາວະທຳເຫຼົ່ານີ້ ຊື່ວ່າບໍ່ເປັນເຫດໃຫ້ເຖິງປະຕິສົນທິ ຈຸຕິ ແລະນິບພານ

## ໑໑. ເສກຂະຕິກະ

[໑໔໑໔] ສະພາວະທຳທີ່ເປັນຂອງເສຂະບຸກຄົນ ເປັນແນວໃດ?

ມັກ ໔ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສາມັນຍະຜົນເບື້ອງຕ່ຳ ໓ ສະພາວະທຳເຫຼົ່ານີ້ ຊື່ວ່າ ເປັນຂອງເສຂະບຸກຄົນ

[໑໔໑໕] ສະພາວະທຳທີ່ເປັນຂອງອະເສຂະບຸກຄົນ ເປັນແນວໃດ?

ອະຣະຫັດຕະຜົນທີ່ເປັນຜົນເບື້ອງເທິງ ສະພາວະທຳເຫຼົ່ານີ້ຊື່ວ່າເປັນຂອງອະເສຂະບຸກຄົນ

[໑໔໑໖] ສະພາວະທຳທີ່ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນ ເປັນແນວໃດ?

ກຸສົນໃນພູມ ໓ ອະກຸສົນ ວິບາກໃນພູມ ໓ ອັບພະຍາກະຕະກິຣິຍາໃນພູມ ໓ ຮູບ ແລະ ນິບພານ ສະພາວະທຳເຫຼົ່ານີ້ຊື່ວ່າ ບໍ່ເປັນຂອງເສຂະບຸກຄົນແລະອະເສຂະບຸກຄົນ

## ໑໒. ປະຣິດຕະຕິກະ

[໑໔໑໗] ສະພາວະທຳທີ່ເປັນປະຣິດຕະ ເປັນແນວໃດ?

ກາມາວະຈອນກຸສົນ ອະກຸສົນ ກາມາວະຈອນວິບາກທັງໝົດ ກາມາວະຈອນອັບພະຍາກະ ຕະກິຣິຍາ ແລະຮູບທັງໝົດ ສະພາວະທຳເຫຼົ່ານີ້ຊື່ວ່າ ເປັນປະຣິດຕະ

[໑໔໑໘] ສະພາວະທຳທີ່ເປັນມະຫັກຄະຕະ ເປັນແນວໃດ?

ກຸສົນແລະອັບພະຍາກະຕະທີ່ເປັນຮູບປາວະຈອນແລະອະຮູບປາວະຈອນ ສະພາວະທຳ ເຫຼົ່ານີ້ຊື່ວ່າເປັນມະຫັກຄະຕະ

[໑໔໑໙] ສະພາວະທຳທີ່ເປັນອັບປະມານະ ເປັນແນວໃດ?

ມັກ ໔ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສາມັນຍະຜົນ ໔ ແລະນິບພານ ສະພາວະທຳເຫຼົ່ານີ້ຊື່ວ່າເປັນອັບປະມານະ

## ໑໓. ປະຣິດຕາຣຳມະນະຕິກະ

[໑໔໘໐] ສະພາວະທຳທີ່ມີປະຣິດຕະເປັນອາລົມ ເປັນແນວໃດ?

ການາວະຈອນວິບາກທັງໝົດ ມະໂນທາດທີ່ເປັນກິຣິຍາ ມະໂນວິນຍານທາດທີ່ເປັນອະເຫຕຸກະກິຣິຍາເຊິ່ງປະກອບດ້ວຍໂສມະນັດ ສະພາວະທຳເຫຼົ່ານີ້ຊື່ວ່າມີປະຣິດຕະເປັນອາລົມ

[໑໔໘໑] ສະພາວະທຳທີ່ມີມະຫັກຄະຕະເປັນອາລົມ ເປັນແນວໃດ?

ວິນຍານັນຈາຍະຕະນະ ເນວະສັນຍານາສັນຍາຍະຕະນະ ສະພາວະທຳເຫຼົ່ານີ້ຊື່ວ່າມີມະຫັກຄະຕະເປັນອາລົມ

[໑໔໘໘] ສະພາວະທຳທີ່ມີອັບປະມານະເປັນອາລົມ ເປັນແນວໃດ?

ມັກ ໔ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສາມັນຍະຜົນ ໔ ສະພາວະທຳເຫຼົ່ານີ້ຊື່ວ່າ ມີອັບປະມານະເປັນອາລົມ

ຈິດຕຸບບາດທີ່ເປັນຍານະວິບປະຍຸດຝ່າຍການາວະຈອນກຸສົນ ໔ ຈິດຕຸບບາດທີ່ເປັນຍານະວິບປະຍຸດຝ່າຍກິຣິຍາ ໔ ອະກຸສົນທັງໝົດ ສະພາວະທຳເຫຼົ່ານີ້ມີປະຣິດຕະເປັນອາລົມກໍມີ ມີມະຫັກຄະຕະເປັນອາລົມແຕ່ບໍ່ມີອັບປະມານະເປັນອາລົມ ກ່າວບໍ່ໄດ້ວ່າ ມີປະຣິດຕະ ເປັນອາລົມຫຼືມີມະຫັກຄະຕະປັນອາລົມກໍມີ ຈິດຕຸບບາດທີ່ເປັນຍານະສຳປະຍຸດຝ່າຍການາວະຈອນກຸສົນ ໔ ຝ່າຍກິຣິຍາ ໔ ຮູບປາວະຈອນຈະຕຸດຖະຊານຝ່າຍກຸສົນແລະກິຣິຍາ ມະໂນວິນຍານທາດທີ່ເປັນອະເຫຕຸກະກິຣິຍາເຊິ່ງປະກອບດ້ວຍອຸເປກຂາ ສະພາວະທຳເຫຼົ່ານີ້ຊື່ວ່າມີປະຣິດຕະເປັນອາລົມກໍມີ ມີມະຫັກຄະຕະເປັນອາລົມກໍມີ ມີອັບປະມານະເປັນອາລົມກໍມີ ກ່າວບໍ່ໄດ້ວ່າ ມີປະຣິດຕະເປັນອາລົມ ມີມະຫັກຄະຕະເປັນອາລົມ ຫຼື ມີອັບປະມານະເປັນອາລົມກໍມີ ຊານ ໓ ແລະຊານ ໔ ທີ່ເປັນຮູບປາວະຈອນຝ່າຍກຸສົນ ວິບາກ ແລະກິຣິຍາ ຈະຕຸດຖະຊານວິບາກ ອາກາສານັນຈາຍະຕະນະ ອາກິນຈັນຍາຍະຕະນະ ສະພາວະທຳເຫຼົ່ານີ້ ກ່າວບໍ່ໄດ້ວ່າ ມີປະຣິດຕະເປັນອາລົມ ມີມະຫັກຄະຕະເປັນອາລົມ ຫຼື ມີອັບປະມານະເປັນອາລົມ ຮູບແລະນິບພານຊື່ວ່າຮັບຮູ້ອາລົມບໍ່ໄດ້

## ໑໔. ຫີນະຕິກະ

[໑໔໘໓] ສະພາວະທຳຊັ້ນຕ່ຳ ເປັນແນວໃດ?

ຈິດຕຸບບາດທີ່ເປັນອະກຸສົນ ສະພາວະທຳເຫຼົ່ານີ້ຊື່ວ່າທຳຊັ້ນຕ່ຳ

[໑໔໘໔] ສະພາວະທຳຊັ້ນກາງ ເປັນແນວໃດ?

ກຸສົນໃນພູມ ໓ ວິບາກໃນພູມ ໓ ອັບພະຍາກະຕະກິຣິຍາໃນພູມ ໓ ແລະຮູບທັງໝົດ ສະພາວະທຳເຫຼົ່ານີ້ຊື່ວ່າທຳຊັ້ນກາງ

[໑໔໔໕] ສະພາວະທຳຊັ້ນປະນີດ ເປັນແນວໃດ?

ມັກ ໔ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສາມັນຍະຜົນ ໔ ແລະ ນິບພານ ສະພາວະທຳເຫຼົ່ານີ້ຊື່ວ່າທຳຊັ້ນປະນີດ

## ໑໕. ມິດສັດຕະຕິກະ

[໑໔໔໖] ສະພາວະທຳທີ່ມີສະພາວະຜິດແລະໃຫ້ຜົນແນ່ນອນ ເປັນແນວໃດ?

ຈິດຕຸບບາດທີ່ເປັນທິດຖິຄະຕະສຳປະຍຸດຕະຈິດ ໔ ຈິດຕຸບບາດທີ່ປະກອບດ້ວຍໂທມະນັດ ໔ ສະພາວະທຳເຫຼົ່ານີ້ຊື່ວ່າ ມີສະພາວະຜິດແລະໃຫ້ຜົນແນ່ນອນກໍມີ ໃຫ້ຜົນບໍ່ແນ່ນອນກໍມີ

[໑໔໔໗] ສະພາວະທຳທີ່ມີສະພາວະຊອບແລະໃຫ້ຜົນແນ່ນອນ ເປັນແນວໃດ?

ມັກ ໔ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສະພາວະທຳເຫຼົ່ານີ້ຊື່ວ່າ ມີສະພາວະຊອບແລະໃຫ້ຜົນແນ່ນອນ

[໑໔໔໘] ສະພາວະທຳທີ່ບໍ່ແນ່ນອນໂດຍອາການທັງສອງນັ້ນ ເປັນແນວໃດ?

ຈິດຕຸບບາດທີ່ປະກອບດ້ວຍໂລພະວິບປະຍຸດຈາກທິດຖິ ໔ ຈິດຕຸບບາດທີ່ປະກອບດ້ວຍວິຈິກິດສາ ຈິດຕຸບບາດທີ່ປະກອບດ້ວຍອຸດທັດຈະ ກຸສົນໃນພູມ ໓ ວິບາກໃນພູມ ໓ ອັບພະຍາກະຕະກິຣິຍາໃນພູມ ໓ ຮູບ ແລະ ນິບພານ ສະພາວະທຳເຫຼົ່ານີ້ຊື່ວ່າບໍ່ແນ່ນອນໂດຍອາການທັງສອງນັ້ນ

## ໑໖. ມັກຄາຣຳມະນະຕິກະ

[໑໔໔໙] ສະພາວະທຳທີ່ມີມັກເປັນອາລົມ ເປັນແນວໃດ?

ຈິດຕຸບບາດທີ່ເປັນຍານະສຳປະຍຸດຝ່າຍກາມາວະຈອນກຸສົນ ໔ ຝ່າຍກິຣິຍາ ໔ ສະພາວະທຳເຫຼົ່ານີ້ຊື່ວ່າ ມີມັກເປັນອາລົມກໍມີ ແຕ່ບໍ່ມີມັກເປັນເຫດ ທີ່ມີມັກເປັນອະທິບໍດີກໍມີ ແຕ່ກ່າວບໍ່ໄດ້ວ່າ ມີມັກເປັນອາລົມຫຼືມີມັກເປັນອະທິບໍດີ ອະຣິຍະມັກ ໔ ບໍ່ມີມັກເປັນອາລົມແຕ່ມີມັກເປັນເຫດທີ່ມີມັກເປັນອະທິບໍດີກໍມີ ແຕ່ກ່າວບໍ່ໄດ້ວ່າ ມີມັກເປັນອະທິບໍດີກໍມີ ຮູບປາວະຈອນຈະຕຸດຖະຊານທີ່ເປັນຝ່າຍກຸສົນແລະຝ່າຍກິຣິຍາ ມະໂນວິນຍານທາດທີ່ເປັນອະເຫຕຸກະກິຣິຍາເຊິ່ງປະກອບດ້ວຍອຸເປກຂາ ສະພາວະທຳເຫຼົ່ານີ້ຊື່ວ່າມີມັກເປັນອາລົມ ແຕ່ບໍ່ມີມັກເປັນເຫດ ທີ່ບໍ່ມີມັກເປັນອະທິບໍດີ ແຕ່ກ່າວບໍ່ໄດ້ວ່າ ມີມັກເປັນອາລົມກໍມີ ຈິດຕຸບບາດທີ່ເປັນຍານະວິບປະຍຸດ ໔ ອະກຸສົນທັງໝົດ ວິບາກແຫ່ງກາມາວະຈອນທັງໝົດ ຈິດຕຸບບາດຝ່າຍກິຣິຍາ ໖ ຊານ ໓ ຊານ ໔ ທີ່ເປັນຮູບປາ

ວະຈອນຝ່າຍກຸສົນ ວິບາກ ແລະກິຣິຍາ ວິບາກແຫ່ງຈະຕຸດຖະຊານ ອະຣູບຊານ ໔ ຝ່າຍກຸສົນ ວິບາກ ກິຣິຍາ ແລະສາມັນຍະຜົນ ໔ ສະພາວະທຳເຫຼົ່ານີ້ກ່າວບໍ່ໄດ້ວ່າ ມີມັກເປັນອາລົມ ມີມັກເປັນເຫດ ຫຼື ມີມັກເປັນອະທິບໍດີ ຮູບແລະນິບພານຮັບຮູ້ອາລົມບໍ່ໄດ້

## ໑໗. ອຸບປັນນະຕິກະ

[໑໔໓໐] ສະພາວະທຳທີ່ເກີດຂຶ້ນ ເປັນແນວໃດ?

ວິບາກໃນພູມ ໔ ຮູບອັນກຳປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າເກີດຂຶ້ນກໍມີ ທີ່ຈັກເກີດແນ່ນອນກໍມີ ແຕ່ກ່າວບໍ່ໄດ້ວ່າ ຍັງບໍ່ເກີດຂຶ້ນ ກຸສົນໃນພູມ ໔ ອະກຸສົນ ອັບພະຍາກະຕະ ກິຣິຍາໃນພູມ ໓ ຮູບອັນກຳບໍ່ປຸງແຕ່ງ ສະພາວະທຳເຫຼົ່ານີ້ຊື່ວ່າເກີດຂຶ້ນກໍມີ ຍັງບໍ່ເກີດຂຶ້ນກໍມີ ແຕ່ກ່າວບໍ່ໄດ້ວ່າຈັກເກີດຂຶ້ນແນ່ນອນ ນິບພານກ່າວບໍ່ໄດ້ວ່າເກີດຂຶ້ນ ຍັງບໍ່ເກີດຂຶ້ນ ຫຼື ຈັກເກີດຂຶ້ນແນ່ນອນ

## ໑໘. ອະຕີຕະຕິກະ

[໑໔໓໑] ເວັ້ນນິບພານແລ້ວ ສະພາວະທຳທັງໝົດທີ່ເປັນອະດີດກໍມີ ທີ່ເປັນອະນາຄົດກໍມີ ທີ່ເປັນປັດຈຸບັນກໍມີ ນິບພານກ່າວບໍ່ໄດ້ວ່າເປັນອະດີດ ອະນາຄົດ ຫຼື ເປັນປັດຈຸບັນ

## ໑໙. ອະຕີຕາຣຳມະນະຕິກະ

[໑໔໓໒] ສະພາວະທຳທີ່ມີອະດີດທຳເປັນອາລົມ ເປັນແນວໃດ?

ວິນຍານັນຈາຍະຕະນະ ແລະເນວະສັນຍານາສັນຍາຍະຕະນະ ສະພາວະທຳເຫຼົ່ານີ້ຊື່ວ່າ ມີອະດີດທຳເປັນອາລົມ

[໑໔໓໓] ສະພາວະທຳທີ່ມີອະນາຄົດທຳເປັນອາຣົມຢ່າງດຽວ ບໍ່ມີ

[໑໔໓໔] ສະພາວະທຳທີ່ມີປັດຈຸບັນທຳເປັນອາລົມ ເປັນແນວໃດ?

ປັນຈະວິນຍານແລະມະໂນທາດ ໓ ສະພາວະທຳເຫຼົ່ານີ້ຊື່ວ່າ ມີປັດຈຸບັນທຳເປັນ ອາລົມ

ຈິດຕຸບບາດຝ່າຍວິບາກແຫ່ງກາມາວະຈອນກຸສົນ ໑໐ ມະໂນວິນຍານທາດທີ່ປະກອບດ້ວຍອຸເປກຂາຝ່າຍອະກຸສົນວິບາກ ມະໂນວິນຍານທາດທີ່ເປັນອະເຫຕຸກະກິຣິຍາເຊິ່ງປະກອບດ້ວຍໂສມະນັດ ສະພາວະທຳເຫຼົ່ານີ້ທີ່ມີອະດີດທຳເປັນອາລົມກໍມີ ທີ່ມີອະນາຄົດທຳເປັນອາລົມກໍມີ ທີ່ມີປັດຈຸບັນທຳເປັນອາລົມກໍມີ ກາມາວະຈອນກຸສົນ ອະກຸສົນ ຈິດຕຸບບາດຝ່າຍກິຣິຍາ ໙ ຮູບປາວະຈອນຈະຕຸດຖະຊານຝ່າຍກຸສົນແລະກິຣິຍາ ສະພາວະທຳເຫຼົ່ານີ້ທີ່ມີອະດີດທຳເປັນອາລົມກໍມີ ທີ່ມີອະນາຄົດທຳເປັນອາລົມກໍມີ ທີ່ມີປັດຈຸບັນທຳເປັນອາລົມກໍມີ ແລະກ່າວບໍ່ໄດ້ວ່າ ມີອະດີດທຳເປັນ

ອາລົມຫຼືມີອະນາຄົດທຳເປັນອາລົມຊານ ໓ ແລະ ໔ ທີ່ເປັນຮູບປາວະຈອນຝ່າຍກຸສົນ ວິບາກ ແລະກິຣິຍາ ຈະຕຸດຖະຊານວິບາກ ອາກາສານັນຈາຍະຕະນະ ອາກິນຈັນຍາຍະຕະນະ ມັກ ໔ ທີ່ບໍ່ນັບເນື່ອງໃນວັດຕະທຸກ ສາມັນຍະຜົນ ໔ ສະພາວະທຳເຫຼົ່ານີ້ກ່າວບໍ່ໄດ້ວ່າມີອະດີດທຳເປັນອາລົມ ມີອະນາຄົດທຳເປັນອາລົມ ຫຼືມີປັດຈຸບັນທຳເປັນອາລົມ ຮູບແລະນິບພານຊື່ວ່າຮັບຮູ້ອາລົມບໍ່ໄດ້

## ໔໐. ອັດຊັດຕະຕິກະ

[໑໔໓໕] ເວັ້ນຮູບທີ່ບໍ່ເນື່ອງດ້ວຍອິນຊີແລະນິບພານແລ້ວ ສະພາວະທຳທັງໝົດທີ່ເປັນພາຍໃນຕົນກໍມີ ທີ່ເປັນພາຍນອກຕົນກໍມີ ທີ່ເປັນພາຍໃນຕົນແລະພາຍນອກຕົນກໍມີ ຮູບທີ່ບໍ່ເນື່ອງດ້ວຍອິນຊີແລະນິບພານຊື່ວ່າ ເປັນພາຍນອກຕົນ

## ໔໑. ອັດຊັດຕາຣຳມະນະຕິກະ

[໑໔໓໖] ສະພາວະທຳທີ່ມີທຳພາຍໃນຕົນເປັນອາລົມ ເປັນແນວໃດ?

ວິນຍານັນຈາຍະຕະນະ ແລະເນວະສັນຍານາສັນຍາຍະຕະນະ ສະພາວະທຳເຫຼົ່ານີ້ຊື່ວ່າ ມີທຳພາຍໃນຕົນເປັນອາລົມ

[໑໔໓໗] ສະພາວະທຳທີ່ມີທຳພາຍນອກຕົນເປັນອາລົມ ເປັນແນວໃດ?

ຊານ ໓ ແລະຊານ ໔ ທີ່ເປັນຮູບປາວະຈອນຝ່າຍກຸສົນ ວິບາກ ແລະກິຣິຍາ ຈະຕຸດຖະຊານວິບາກ ອາກາສານັນຈາຍະຕະນະ ມັກ ໔ ທີ່ບໍ່ນັບເນື່ອງໃນວັດຕະທຸກ ແລະສາມັນຍະຜົນ ໔ ສະພາວະທຳເຫຼົ່ານີ້ຊື່ວ່າ ມີທຳພາຍນອກຕົນເປັນອາລົມ

ເວັ້ນຮູບແລ້ວ ສະພາວະທຳທີ່ເປັນກຸສົນ ອະກຸສົນ ແລະອັບພະຍາກະຕະທີ່ເປັນກາມາວະຈອນທັງໝົດ ຮູບປາວະຈອນຈະຕຸດຖະຊານຝ່າຍກຸສົນແລະກິຣິຍາ ສະພາວະທຳເຫຼົ່ານີ້ທີ່ມີທຳພາຍໃນຕົນເປັນອາລົມກໍມີ ທີ່ມີທຳພາຍນອກຕົນເປັນອາລົມກໍມີ ທີ່ມີທຳພາຍໃນຕົນແລະພາຍນອກຕົນເປັນອາລົມກໍມີ ອາກິນຈັນຍາຍະຕະນະກ່າວບໍ່ໄດ້ວ່າມີທຳພາຍໃນເປັນອາລົມ ມີທຳພາຍນອກຕົນເປັນອາລົມ ຫຼື ມີທຳພາຍໃນຕົນແລະພາຍນອກຕົນເປັນອາລົມ ຮູບແລະນິບພານຊື່ວ່າຮັບຮູ້ອາລົມບໍ່ໄດ້

## ໔໔. ສະນິທັດສະນະຕິກະ

[໑໔໓໘] ສະພາວະທຳທີ່ເຫັນໄດ້ແລະກະທົບໄດ້ ເປັນແນວໃດ?

ຮູປາຍະຕະນະ ສະພາວະທຳເຫຼົ່ານີ້ຊື່ວ່າເຫັນໄດ້ແລະກະທົບໄດ້

